# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໓໘

# ພຣະອະພິທຳ

## ເຫຼັ້ມທີ ໕

## ຍະມົກ ພາກ ໑



ສະບັບຄົ້ນຄ້ວາວັດທາດຫຼວງເໜືອ
ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໔໕໕໕-໔໕໕໗ ເປັນຈຳນວນ ໙໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໔ ຄືດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງ ຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໔ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໓໙

# ພຣະອະພິທຳ

## ເຫຼັ້ມທີ ໖

# ຍະມົກ ພາກ ໔

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

# ຈິດຕະຍະມົກ

## ອຸດເທດ

### ໑. ສຸດທະຈິດຕະສາມັນຍະ

### ໑. ປຸກຄະລະວານ

### ໑. ອຸບປາທະນິໂຣທະກາລະສຳເພທະວານ

[໑] ຈິດຂອງບຸກຄົນໃດກຳລັງເກີດ ບໍ່ແມ່ນກຳລັງດັບ ຈິດຂອງບຸກຄົນນັ້ນກໍຈັກດັບ ບໍ່ແມ່ນຈັກເກີດແມ່ນບໍ?

ຈິດຂອງບຸກຄົນໃດຈັກດັບ ບໍ່ແມ່ນຈັກເກີດ ຈິດຂອງບຸກຄົນນັ້ນກໍກຳລັງເກີດ ບໍ່ແມ່ນກຳລັງດັບແມ່ນບໍ?

ຈິດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ແຕ່ກຳລັງດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບ ແຕ່ຈັກເກີດແມ່ນບໍ?

ຈິດຂອງບຸກຄົນໃດບໍ່ແມ່ນຈັກດັບ ແຕ່ຈັກເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດ ແຕ່ກຳລັງດັບມີບໍ? (໖໓)

## ໔. ອຸບປາທຸບປັນນະວານ

[໔] ຈິດຂອງບຸກຄົນໃດກຳລັງເກີດ ຈິດຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?
ຈິດຂອງບຸກຄົນໃດເກີດແລ້ວ ຈິດຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?(໒໔)

## ໕. ນິໂຣທຸບປັນນະວານ

[໕] ຈິດຂອງບຸກຄົນໃດກຳລັງດັບ ຈິດຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?
ຈິດຂອງບຸກຄົນໃດເກີດແລ້ວ ຈິດຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ? (໒໕)

## ໖. ອຸບປາທະວານ

[໖] ຈິດຂອງບຸກຄົນໃດກຳລັງເກີດ ຈິດຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?
ຈິດຂອງບຸກຄົນໃດເຄີຍເກີດ ຈິດຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?
ຈິດຂອງບຸກຄົນໃດບໍ່ເຄີຍເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດມີບໍ? (໒໒)

[໕] ຈິດຂອງບຸກຄົນໃດກຳລັງເກີດ ຈິດຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?
ຈິດຂອງບຸກຄົນໃດຈັກເກີດ ຈິດຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?(໒໗)

[໖] ຈິດຂອງບຸກຄົນໃດເຄີຍເກີດ ຈິດຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?
ຈິດຂອງບຸກຄົນໃດຈັກເກີດ ຈິດຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?
ຈິດຂອງບຸກຄົນໃດບໍ່ເຄີຍເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດມີບໍ?
ຈິດຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ? (໖໘)

## ໕. ນິໂຣທະວານ

[໗] ຈິດຂອງບຸກຄົນໃດກຳລັງດັບ ຈິດຂອງບຸກຄົນນັ້ນກໍເຄີຍດັບແມ່ນບໍ?
ຈິດຂອງບຸກຄົນໃດເຄີຍດັບ ຈິດຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍດັບແມ່ນບໍ?
ຈິດຂອງບຸກຄົນໃດບໍ່ເຄີຍດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບມີບໍ? (໖໙)

[໘] ຈິດຂອງບຸກຄົນໃດກຳລັງດັບ ຈິດຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?
ຈິດຂອງບຸກຄົນໃດຈັກດັບ ຈິດຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນຈັກດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ? (໗໐)

[໙] ຈິດຂອງບຸກຄົນໃດເຄີຍດັບ ຈິດຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?
ຈິດຂອງບຸກຄົນໃດຈັກດັບ ຈິດຂອງບຸກຄົນນັ້ນກໍເຄີຍດັບແມ່ນບໍ?
ຈິດຂອງບຸກຄົນໃດບໍ່ເຄີຍດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບມີບໍ?
ຈິດຂອງບຸກຄົນໃດບໍ່ແມ່ນຈັກດັບ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍດັບແມ່ນບໍ? (໗໑)

## ໖. ອຸບປາທະນິໂຣທະວານ

[໑໐] ຈິດຂອງບຸກຄົນໃດກຳລັງເກີດ ຈິດຂອງບຸກຄົນນັ້ນກໍເຄີຍດັບແມ່ນບໍ?
ຈິດຂອງບຸກຄົນໃດເຄີຍດັບ ຈິດຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍດັບແມ່ນບໍ?
ຈິດຂອງບຸກຄົນໃດບໍ່ເຄີຍດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດມີບໍ? (໗໔)

[໑໑] ຈິດຂອງບຸກຄົນໃດກຳລັງເກີດ ຈິດຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?
ຈິດຂອງບຸກຄົນໃດຈັກດັບ ຈິດຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ຈິດຂອງບຸກຄົນໃດບໍ່ແມ່ນກໍາລັງເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນຈັກດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ?(ກ໙)

[໑໘] ຈິດຂອງບຸກຄົນໃດເຄີຍເກີດ ຈິດຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?
ຈິດຂອງບຸກຄົນໃດຈັກດັບ ຈິດຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?
ຈິດຂອງບຸກຄົນໃດບໍ່ເຄີຍເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບມີບໍ?
ຈິດຂອງບຸກຄົນໃດບໍ່ແມ່ນຈັກດັບ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ? (ກ໔)

## ກ. ອຸບປັດຊະມານະນະນິໂຣທະວານ

[໑໙] ຈິດຂອງບຸກຄົນໃດກໍາລັງເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງດັບແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນກໍາລັງດັບ ຈິດຂອງບຸກຄົນນັ້ນກໍກໍາລັງເກີດແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນກໍາລັງເກີດ ຈິດຂອງບຸກຄົນນັ້ນກໍກໍາລັງດັບແມ່ນບໍ?
ຈິດຂອງບຸກຄົນໃດກໍາລັງດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກໍາລັງເກີດແມ່ນບໍ? (ກ໕)

## ໗. ອຸບປັດຊະມານຸບປັນນະວານ

[໑໔] ຈິດຂອງບຸກຄົນໃດເກີດຢູ່ ຈິດຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?
ຈິດຂອງບຸກຄົນໃດເກີດແລ້ວ ຈິດຂອງບຸກຄົນນັ້ນກໍເກີດຢູ່ແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນເກີດຢູ່ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນເກີດຢູ່ແມ່ນບໍ? (ກ໖)

## ໗. ນິຣຸດຊະມານຸບປັນນະວານ

[໑໕] ຈິດຂອງບຸກຄົນໃດດັບຢູ່ ຈິດຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?
ຈິດຂອງບຸກຄົນໃດເກີດແລ້ວ ຈິດຂອງບຸກຄົນນັ້ນກໍດັບຢູ່ແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນດັບຢູ່ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນດັບຢູ່ແມ່ນບໍ? (ກ໗)

## ໑໐. ອຸບປັນນຸບປາທະວານ

[໑໖] ຈິດຂອງບຸກຄົນໃດເກີດແລ້ວ ຈິດຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?
ຈິດຂອງບຸກຄົນໃດເຄີຍເກີດ ຈິດຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?
ຈິດຂອງບຸກຄົນໃດບໍ່ເຄີຍເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວມີບໍ? (໑໗)
ຈິດຂອງບຸກຄົນໃດເກີດແລ້ວ ຈິດຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?
ຈິດຂອງບຸກຄົນໃດຈັກເກີດ ຈິດຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?
ຈິດຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ? (໑໘)

## ໑໑. ອະຕີຕານາຄະຕະວານ

[໑໗] ຈິດຂອງບຸກຄົນໃດເຄີຍເກີດ ຈິດຂອງບຸກຄົນນັ້ນບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ຈິດຂອງບຸກຄົນໃດຈັກເກີດ ຈິດຂອງບຸກຄົນນັ້ນບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ຈິດຂອງບຸກຄົນໃດບໍ່ເຄີຍເກີດ ແຕ່ຈິດຂອງບຸກຄົນນັ້ນບໍ່ແມ່ນບໍ່ເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດມີບໍ?

ຈິດຂອງບຸກຄົນໃດບໍ່ແມ່ນຈັກເກີດ ແຕ່ຈິດຂອງບຸກຄົນນັ້ນບໍ່ແມ່ນບໍ່ເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ? (໒໐)

## ໑໒. ອຸບປັນນຸບປັດຊະມານະວານ

[໑໘] ຈິດທີ່ເກີດແລ້ວ ກໍຊື່ວ່າເກີດຢູ່ແມ່ນບໍ? ຈິດທີ່ເກີດຢູ່ ກໍຊື່ວ່າເກີດແລ້ວແມ່ນບໍ?

ຈິດທີ່ບໍ່ແມ່ນເກີດແລ້ວ ກໍຊື່ວ່າບໍ່ແມ່ນເກີດຢູ່ແມ່ນບໍ? ຈິດທີ່ບໍ່ແມ່ນເກີດຢູ່ ກໍຊື່ວ່າບໍ່ແມ່ນເກີດແລ້ວແມ່ນບໍ? (໒໑)

## ໑໓. ນິຣຸດທະນິຣຸດຊະມານະວານ

[໑໙] ຈິດທີ່ດັບແລ້ວ ກໍຊື່ວ່າດັບຢູ່ແມ່ນບໍ? ຈິດທີ່ດັບຢູ່ ກໍຊື່ວ່າດັບແລ້ວແມ່ນບໍ?

ຈິດທີ່ບໍ່ແມ່ນດັບແລ້ວ ກໍຊື່ວ່າບໍ່ແມ່ນດັບຢູ່ແມ່ນບໍ? ຈິດທີ່ບໍ່ແມ່ນດັບຢູ່ ກໍຊື່ວ່າບໍ່ແມ່ນດັບແລ້ວແມ່ນບໍ? (໗໘)

## ໑໔. ອະຕິກກັນຕະກາລະວານ

[໔໐] ຈິດຂອງບຸກຄົນໃດລ່ວງໄປທຸກ ໆ ຂະນະທີ່ເກີດຢູ່ ຊື່ວ່າລ່ວງການແລ້ວ ຈິດຂອງບຸກຄົນນັ້ນລ່ວງໄປທຸກ ໆ ຂະນະທີ່ດັບຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ຈິດຂອງບຸກຄົນໃດລ່ວງໄປທຸກ ໆ ຂະນະທີ່ດັບຢູ່ ຊື່ວ່າລ່ວງການແລ້ວ ຈິດຂອງບຸກຄົນນັ້ນລ່ວງໄປທຸກ ໆ ຂະນະທີ່ເກີດຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ຈິດຂອງບຸກຄົນໃດລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນເກີດຢູ່ ຊື່ວ່າລ່ວງການແລ້ວ ຈິດຂອງບຸກຄົນນັ້ນລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນດັບຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ຈິດຂອງບຸກຄົນໃດລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນດັບຢູ່ ຊື່ວ່າລ່ວງການແລ້ວ ຈິດຂອງບຸກຄົນນັ້ນລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນເກີດຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ? (໗໙)

**ອຸດເທດແຫ່ງປຸກຄະລະວານ ຈົບ**

# ໑. ສຸດທະຈິດຕະສາມັນຍະ

## ໔. ທຳມະວານ

## ໑. ອຸບປາທະນິໂຣທະກາລະສຳເພທະວານ

[໔໑] ຈິດໃດກຳລັງເກີດ ບໍ່ແມ່ນກຳລັງດັບ ຈິດນັ້ນກໍຈັກດັບ ບໍ່ແມ່ນຈັກເກີດແມ່ນບໍ?

ຈິດໃດຈັກດັບ ບໍ່ແມ່ນຈັກເກີດ ຈິດນັ້ນກໍກຳລັງເກີດ ບໍ່ແມ່ນກຳລັງດັບແມ່ນບໍ?

ຈິດໃດບໍ່ແມ່ນກຳລັງເກີດ ແຕ່ກຳລັງດັບ ຈິດນັ້ນກໍບໍ່ແມ່ນຈັກດັບ ແຕ່ຈັກເກີດແມ່ນບໍ?

ຈິດໃດບໍ່ແມ່ນຈັກດັບ ແຕ່ຈັກເກີດ ຈິດນັ້ນກໍບໍ່ແມ່ນກຳລັງເກີດ ແຕ່ກຳລັງດັບມີບໍ? (໗໔)

## ໔. ອຸບປາທຸບປັນນະວານ

| | |
|---|---|
| [໔໔] ຈິດໃດກຳລັງເກີດ | ຈິດນັ້ນກໍເກີດແລ້ວແມ່ນບໍ? |
| ຈິດໃດເກີດແລ້ວ | ຈິດນັ້ນກໍກຳລັງເກີດແມ່ນບໍ? |
| ຈິດໃດບໍ່ແມ່ນກຳລັງເກີດ | ຈິດນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ? |
| ຈິດໃດບໍ່ແມ່ນເກີດແລ້ວ | ຈິດນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ? (໗໕) |

## ໓. ນິໂຣທຸບປັນນະວານ

[໔໓] ຈິດໃດກຳລັງດັບ ຈິດນັ້ນກໍເກີດແລ້ວແມ່ນບໍ?
ຈິດໃດເກີດແລ້ວ ຈິດນັ້ນກໍກຳລັງດັບແມ່ນບໍ?
ຈິດໃດບໍ່ແມ່ນກຳລັງດັບ ຈິດນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?
ຈິດໃດບໍ່ແມ່ນເກີດແລ້ວ ຈິດນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ? (໘໖)

## ໔. ອຸບປາທະວານ

[໔໔] ຈິດໃດກຳລັງເກີດ ຈິດນັ້ນກໍເຄີຍເກີດແມ່ນບໍ?
ຈິດໃດເຄີຍເກີດ ຈິດນັ້ນກໍກຳລັງເກີດແມ່ນບໍ?
ຈິດໃດບໍ່ແມ່ນກຳລັງເກີດ ຈິດນັ້ນກໍບໍ່ເຄີຍເກີດແມ່ນບໍ?
ຈິດໃດບໍ່ເຄີຍເກີດ ຈິດນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ? (໘໗)

[໔໕] ຈິດໃດກຳລັງເກີດ ຈິດນັ້ນກໍຈັກເກີດແມ່ນບໍ?
ຈິດໃດຈັກເກີດ ຈິດນັ້ນກໍກຳລັງເກີດແມ່ນບໍ?
ຈິດໃດບໍ່ແມ່ນກຳລັງເກີດ ຈິດນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?
ຈິດໃດບໍ່ແມ່ນຈັກເກີດ ຈິດນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ? (໘໘)

[໔໖] ຈິດໃດເຄີຍເກີດ ຈິດນັ້ນກໍຈັກເກີດແມ່ນບໍ?
ຈິດໃດຈັກເກີດ ຈິດນັ້ນກໍເຄີຍເກີດແມ່ນບໍ?
ຈິດໃດບໍ່ເຄີຍເກີດ ຈິດນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?
ຈິດໃດບໍ່ແມ່ນຈັກເກີດ ຈິດນັ້ນກໍບໍ່ເຄີຍເກີດແມ່ນບໍ? (໘໙)

## ໕. ນິໂຣທະວານ

[໔໗] ຈິດໃດກຳລັງດັບ ຈິດນັ້ນກໍເຄີຍດັບແມ່ນບໍ?
ຈິດໃດເຄີຍດັບ ຈິດນັ້ນກໍກຳລັງດັບແມ່ນບໍ?
ຈິດໃດບໍ່ແມ່ນກຳລັງດັບ ຈິດນັ້ນກໍບໍ່ເຄີຍດັບແມ່ນບໍ?
ຈິດໃດບໍ່ເຄີຍດັບ ຈິດນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ? (໙໐)
[໔໘] ຈິດໃດກຳລັງດັບ ຈິດນັ້ນກໍຈັກດັບແມ່ນບໍ?
ຈິດໃດຈັກດັບ ຈິດນັ້ນກໍກຳລັງດັບແມ່ນບໍ?
ຈິດໃດບໍ່ແມ່ນກຳລັງດັບ ຈິດນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?
ຈິດໃດບໍ່ແມ່ນຈັກດັບ ຈິດນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ? (໙໑)

[໔໗] ຈິດໃດເຄີຍດັບ ຈິດນັ້ນກໍຈັກດັບແມ່ນບໍ?
ຈິດໃດຈັກດັບ ຈິດນັ້ນກໍເຄີຍດັບແມ່ນບໍ?
ຈິດໃດບໍ່ເຄີຍດັບ ຈິດນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?
ຈິດໃດບໍ່ແມ່ນຈັກດັບ ຈິດນັ້ນກໍບໍ່ເຄີຍດັບແມ່ນບໍ? (໗໔)

## ຜ. ອຸບປາທະນິໂຣທະວານ

[໕໐] ຈິດໃດກຳລັງເກີດ ຈິດນັ້ນກໍເຄີຍດັບແມ່ນບໍ?
ຈິດໃດເຄີຍດັບ ຈິດນັ້ນກໍກຳລັງເກີດແມ່ນບໍ?
ຈິດໃດບໍ່ແມ່ນກຳລັງເກີດ ຈິດນັ້ນກໍບໍ່ເຄີຍດັບແມ່ນບໍ?
ຈິດໃດບໍ່ເຄີຍດັບ ຈິດນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ? (໗໕)

[໕໑] ຈິດໃດກຳລັງເກີດ ຈິດນັ້ນກໍຈັກດັບແມ່ນບໍ?
ຈິດໃດຈັກດັບ ຈິດນັ້ນກໍກຳລັງເກີດແມ່ນບໍ?
ຈິດໃດບໍ່ແມ່ນກຳລັງເກີດ ຈິດນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?
ຈິດໃດບໍ່ແມ່ນຈັກດັບ ຈິດນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ? (໗໖)

[໕໒] ຈິດໃດເຄີຍເກີດ ຈິດນັ້ນກໍຈັກດັບແມ່ນບໍ?
ຈິດໃດຈັກດັບ ຈິດນັ້ນກໍເຄີຍເກີດແມ່ນບໍ?
ຈິດໃດບໍ່ເຄີຍເກີດ ຈິດນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?
ຈິດໃດບໍ່ແມ່ນຈັກດັບ ຈິດນັ້ນກໍບໍ່ເຄີຍເກີດແມ່ນບໍ? (໗໕)

## ໗. ອຸບປັດຊະມານະນະນິໂຣທະວານ

[໕໕] ຈິດໃດກຳລັງເກີດ ຈິດນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?
ຈິດໃດບໍ່ແມ່ນກຳລັງດັບ ຈິດນັ້ນກໍກຳລັງເກີດແມ່ນບໍ?
ຈິດໃດບໍ່ແມ່ນກຳລັງເກີດ ຈິດນັ້ນກໍກຳລັງດັບແມ່ນບໍ?
ຈິດໃດກຳລັງດັບ ຈິດນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ? (໗ຜ)

## ໗. ອຸບປັດຊະມານຸບປັນນະວານ

[໕໔] ຈິດໃດເກີດຢູ່ ຈິດນັ້ນກໍເກີດແລ້ວແມ່ນບໍ?
ຈິດໃດເກີດແລ້ວ ຈິດນັ້ນກໍເກີດຢູ່ແມ່ນບໍ?
ຈິດໃດບໍ່ແມ່ນເກີດຢູ່ ຈິດນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?
ຈິດໃດບໍ່ແມ່ນເກີດແລ້ວ ຈິດນັ້ນກໍບໍ່ແມ່ນເກີດຢູ່ແມ່ນບໍ? (໗ໆ)

## ໙. ນິຣຸດຊະມານຸບປັນນະວານ

[໓໕] ຈິດໃດດັບຢູ່ ຈິດນັ້ນກໍເກີດແລ້ວແມ່ນບໍ?
ຈິດໃດເກີດແລ້ວ ຈິດນັ້ນກໍດັບຢູ່ແມ່ນບໍ?
ຈິດໃດບໍ່ແມ່ນດັບຢູ່ ຈິດນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?
ຈິດໃດບໍ່ແມ່ນເກີດແລ້ວ ຈິດນັ້ນກໍບໍ່ແມ່ນດັບຢູ່ແມ່ນບໍ? (໙໙)

## ໑໐. ອຸບປັນນຸບປາທະວານ

[໓໖] ຈິດໃດເກີດແລ້ວ ຈິດນັ້ນກໍເຄີຍເກີດແມ່ນບໍ?
ຈິດໃດເຄີຍເກີດ ຈິດນັ້ນກໍເກີດແລ້ວແມ່ນບໍ?
ຈິດໃດບໍ່ແມ່ນເກີດແລ້ວ ຈິດນັ້ນກໍບໍ່ເຄີຍເກີດແມ່ນບໍ?
ຈິດໃດບໍ່ເຄີຍເກີດ ຈິດນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ? (໙໙)
ຈິດໃດເກີດແລ້ວ ຈິດນັ້ນກໍຈັກເກີດແມ່ນບໍ?
ຈິດໃດຈັກເກີດ ຈິດນັ້ນກໍເກີດແລ້ວແມ່ນບໍ?
ຈິດໃດບໍ່ແມ່ນເກີດແລ້ວ ຈິດນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?
ຈິດໃດບໍ່ແມ່ນຈັກເກີດ ຈິດນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ? (໑໐໐)

## ໑໑. ອະຕີຕານາຄະຕະວານ

[໓໗] ຈິດໃດເຄີຍເກີດ ຈິດນັ້ນບໍ່ແມ່ນເກີດແລ້ວ ຈິດນັ້ນກໍຈັກເກີດແມ່ນບໍ?
ຈິດໃດຈັກເກີດ ຈິດນັ້ນບໍ່ແມ່ນເກີດແລ້ວ ຈິດນັ້ນກໍເຄີຍເກີດແມ່ນບໍ?
ຈິດໃດບໍ່ເຄີຍເກີດ ຈິດນັ້ນບໍ່ແມ່ນບໍ່ເກີດແລ້ວ ຈິດນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?
ຈິດໃດບໍ່ແມ່ນຈັກເກີດ ຈິດນັ້ນບໍ່ແມ່ນບໍ່ເກີດແລ້ວ ຈິດນັ້ນກໍບໍ່ເຄີຍເກີດແມ່ນບໍ? (໑໐໑)

## ໑໒. ອຸບປັນນຸບປັດຊະມານະວານ

[໓໘] ຈິດທີ່ເກີດແລ້ວ ກໍຊື່ວ່າເກີດຢູ່ແມ່ນບໍ?
ຈິດທີ່ເກີດຢູ່ ກໍຊື່ວ່າເກີດແລ້ວແມ່ນບໍ?
ຈິດທີ່ບໍ່ແມ່ນເກີດແລ້ວ ກໍຊື່ວ່າບໍ່ແມ່ນເກີດຢູ່ແມ່ນບໍ?
ຈິດທີ່ບໍ່ແມ່ນເກີດຢູ່ ກໍຊື່ວ່າບໍ່ແມ່ນເກີດແລ້ວແມ່ນບໍ? (໑໐໒)

## ໑໗. ນິຣຸດທະນິຣຸດຊະມານະວານ

[໓໙] ຈິດທີ່ດັບແລ້ວ ກໍຊື່ວ່າດັບຢູ່ແມ່ນບໍ?
ຈິດທີ່ດັບຢູ່ ກໍຊື່ວ່າດັບແລ້ວແມ່ນບໍ?
ຈິດທີ່ບໍ່ແມ່ນດັບແລ້ວ ກໍຊື່ວ່າບໍ່ແມ່ນດັບຢູ່ແມ່ນບໍ?
ຈິດທີ່ບໍ່ແມ່ນດັບຢູ່ ກໍຊື່ວ່າບໍ່ແມ່ນດັບແລ້ວແມ່ນບໍ? (໑໐໗)

## ໑໘. ອະຕິກກັນຕະກາລະວານ

[໔໐] ຈິດໃດລ່ວງໄປທຸກ ໆ ຂະນະທີ່ເກີດຢູ່ ຊື່ວ່າລ່ວງການແລ້ວ ຈິດນັ້ນລ່ວງໄປທຸກ ໆ ຂະນະທີ່ດັບຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ຈິດໃດລ່ວງໄປທຸກ ໆ ຂະນະທີ່ດັບຢູ່ ຊື່ວ່າລ່ວງການແລ້ວ ຈິດນັ້ນລ່ວງໄປທຸກ ໆ ຂະນະທີ່ເກີດຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ຈິດໃດລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນເກີດຢູ່ ຊື່ວ່າລ່ວງການແລ້ວ ຈິດນັ້ນລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນດັບຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ຈິດໃດລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນເກີດຢູ່ ຊື່ວ່າລ່ວງການແລ້ວ ຈິດນັ້ນລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນເກີດຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ? (໑໐໘)

**ອຸດເທດແຫ່ງທຳມະວານ ຈົບ**

# ໑. ສຸດທະຈິດຕະສາມັນຍະ

## ກ. ປຸກຄະລະທຳມະວານ

## ໑. ອຸບປາທະນິໂຣທະກາລະສຳເພທະວານ

[໔໑] ຈິດໃດຂອງບຸກຄົນໃດກຳລັງເກີດ ບໍ່ແມ່ນກຳລັງດັບ ຈິດນັ້ນຂອງບຸກຄົນນັ້ນກໍຈັກດັບ ບໍ່ແມ່ນຈັກເກີດແມ່ນບໍ?

ຈິດໃດຂອງບຸກຄົນໃດຈັກດັບ ບໍ່ແມ່ນຈັກເກີດ ຈິດນັ້ນຂອງບຸກຄົນນັ້ນກໍກຳລັງເກີດ ບໍ່ແມ່ນກຳລັງດັບແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ແຕ່ກຳລັງດັບ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບ ແຕ່ຈັກເກີດແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນຈັກດັບ ແຕ່ຈັກເກີດ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດ ແຕ່ກຳລັງດັບມີບໍ? (໑໐໙)

## ໘. ອຸບປາທຸບປັນນະວານ

[໔໘] ຈິດໃດຂອງບຸກຄົນໃດກຳລັງເກີດ ຈິດນັ້ນຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?

ຈິດໃດຂອງບຸກຄົນໃດເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ? (໑໐໖)

## ໙. ນິໂຣທຸບປັນນະວານ

[໔໙] ຈິດໃດຂອງບຸກຄົນໃດກຳລັງດັບ ຈິດນັ້ນຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?

ຈິດໃດຂອງບຸກຄົນໃດເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ? (໑໐໗)

## ໔. ອຸບປາທະວານ

[໔໔] ຈິດໃດຂອງບຸກຄົນໃດກຳລັງເກີດ ຈິດນັ້ນຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ຈິດໃດຂອງບຸກຄົນໃດເຄີຍເກີດ ຈິດນັ້ນຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ເຄີຍເກີດ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ? (໑໐໘)

| | |
|---|---|
| [໔໕] ຈິດໃດຂອງບຸກຄົນໃດກຳລັງເກີດ | ຈິດນັ້ນຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ? |
| ຈິດໃດຂອງບຸກຄົນໃດຈັກເກີດ | ຈິດນັ້ນຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ | ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ແມ່ນຈັກເກີດ | ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ? (໑໐໗) |
| [໔໖] ຈິດໃດຂອງບຸກຄົນໃດເຄີຍເກີດ | ຈິດນັ້ນຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ? |
| ຈິດໃດຂອງບຸກຄົນໃດຈັກເກີດ | ຈິດນັ້ນຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ເຄີຍເກີດ | ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ແມ່ນຈັກເກີດ | ຈິດນັ້ນຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?(໑໑໐) |

## ໕. ນິໂຣທະວານ

| | |
|---|---|
| [໔໗] ຈິດໃດຂອງບຸກຄົນໃດກຳລັງດັບ | ຈິດນັ້ນຂອງບຸກຄົນນັ້ນກໍເຄີຍດັບແມ່ນບໍ? |
| ຈິດໃດຂອງບຸກຄົນໃດເຄີຍດັບ | ຈິດນັ້ນຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງດັບ | ຈິດນັ້ນຂອງບຸກຄົນນັ້ນກໍບໍ່ເຄີຍດັບແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ເຄີຍດັບ | ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ? (໑໑໑) |
| [໔໘] ຈິດໃດຂອງບຸກຄົນໃດກຳລັງດັບ | ຈິດນັ້ນຂອງບຸກຄົນນັ້ນກໍຈັກດັບແມ່ນບໍ? |
| ຈິດໃດຂອງບຸກຄົນໃດຈັກດັບ | ຈິດນັ້ນຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ? |

| | |
|---|---|
| ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງດັບ | ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ແມ່ນຈັກດັບ | ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ? (໑໑໘) |
| [໔໙] ຈິດໃດຂອງບຸກຄົນໃດເຄີຍດັບ | ຈິດນັ້ນຂອງບຸກຄົນນັ້ນກໍຈັກດັບແມ່ນບໍ? |
| ຈິດໃດຂອງບຸກຄົນໃດຈັກດັບ | ຈິດນັ້ນຂອງບຸກຄົນນັ້ນກໍເຄີຍດັບແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ເຄີຍດັບ | ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ແມ່ນຈັກດັບ | ຈິດນັ້ນຂອງບຸກຄົນນັ້ນກໍບໍ່ເຄີຍດັບແມ່ນບໍ? (໑໑໓) |

## ຝ. ອຸບປາທະນິໂຣທະວານ

| | |
|---|---|
| [໕໐] ຈິດໃດຂອງບຸກຄົນໃດກຳລັງເກີດ | ຈິດນັ້ນຂອງບຸກຄົນນັ້ນກໍເຄີຍດັບແມ່ນບໍ? |
| ຈິດໃດຂອງບຸກຄົນໃດເຄີຍດັບ | ຈິດນັ້ນຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ | ຈິດນັ້ນຂອງບຸກຄົນນັ້ນກໍບໍ່ເຄີຍດັບແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ເຄີຍດັບ | ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ? |
| [໕໑] ຈິດໃດຂອງບຸກຄົນໃດກຳລັງເກີດ | ຈິດນັ້ນຂອງບຸກຄົນນັ້ນກໍຈັກດັບແມ່ນບໍ? |
| ຈິດໃດຂອງບຸກຄົນໃດຈັກດັບ | ຈິດນັ້ນຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ | ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ແມ່ນຈັກດັບ | ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ? |

[໕໘] ຈິດໃດຂອງບຸກຄົນໃດເຄີຍເກີດ — ຈິດນັ້ນຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ຈິດໃດຂອງບຸກຄົນໃດຈັກດັບ — ຈິດນັ້ນຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ເຄີຍເກີດ — ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນຈັກດັບ — ຈິດນັ້ນຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?

## ຖ. ອຸບປັດຊະມານະນະນິໂຣທະວານ

[໕໙] ຈິດໃດຂອງບຸກຄົນໃດກຳລັງເກີດ — ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງດັບ — ຈິດນັ້ນຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ — ຈິດນັ້ນຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ?

ຈິດໃດຂອງບຸກຄົນໃດກຳລັງດັບ — ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

## ຕ. ອຸບປັດຊະມານຸບປັນນະວານ

[໖໐] ຈິດໃດຂອງບຸກຄົນໃດເກີດຢູ່ — ຈິດນັ້ນຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?

ຈິດໃດຂອງບຸກຄົນໃດເກີດແລ້ວ — ຈິດນັ້ນຂອງບຸກຄົນນັ້ນກໍເກີດຢູ່ແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນເກີດຢູ່ — ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ — ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນເກີດຢູ່ແມ່ນບໍ?

## ໙. ນິຣຸດຊະມານຸບປັນນະວານ

[໕໕] ຈິດໃດຂອງບຸກຄົນໃດດັບຢູ່ ຈິດນັ້ນຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?

ຈິດໃດຂອງບຸກຄົນໃດເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍດັບຢູ່ແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນດັບຢູ່ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ເກີດແລ້ວແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນດັບຢູ່ແມ່ນບໍ?

## ໑໐. ອຸບປັນນຸບປາທະວານ

[໕໖] ຈິດໃດຂອງບຸກຄົນໃດເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ຈິດໃດຂອງບຸກຄົນໃດເຄີຍເກີດ ຈິດນັ້ນຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ເຄີຍເກີດ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ຈິດໃດຂອງບຸກຄົນໃດເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ຈິດໃດຂອງບຸກຄົນໃດຈັກເກີດ ຈິດນັ້ນຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ຈິດໃດຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

## ໑໑. ອະຕີຕານາຄະຕະວານ

[໕໗] ຈິດໃດຂອງບຸກຄົນໃດເຄີຍເກີດ ຈິດນັ້ນຂອງບຸກຄົນນັ້ນບໍ່ແມ່ນເກີດ

| | |
|---|---|
| | ແລ້ວຈິດນັ້ນຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ? |
| ຈິດໃດຂອງບຸກຄົນໃດຈັກເກີດ | ຈິດນັ້ນຂອງບຸກຄົນນັ້ນບໍ່ແມ່ນເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ເຄີຍເກີດ | ຈິດນັ້ນຂອງບຸກຄົນນັ້ນບໍ່ແມ່ນບໍ່ເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ? |
| ຈິດໃດຂອງບຸກຄົນໃດບໍ່ແມ່ນຈັກເກີດ | ຈິດນັ້ນຂອງບຸກຄົນນັ້ນບໍ່ແມ່ນບໍ່ເກີດແລ້ວຈິດນັ້ນຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ? |

## ໑໗. ອຸບປັນນຸບປັດຊະມານະວານ

[໕໗] ຈິດທີ່ເກີດແລ້ວ ກໍຊື່ວ່າເກີດຢູ່ແມ່ນບໍ? ຈິດທີ່ເກີດຢູ່ກໍຊື່ວ່າເກີດແລ້ວແມ່ນບໍ?

ຈິດທີ່ບໍ່ແມ່ນເກີດແລ້ວ ກໍຊື່ວ່າບໍ່ແມ່ນເກີດຢູ່ແມ່ນບໍ?

ຈິດທີ່ບໍ່ແມ່ນເກີດຢູ່ ກໍຊື່ວ່າບໍ່ແມ່ນເກີດແລ້ວແມ່ນບໍ?

## ໑໘. ນິຣຸດທະນິຣຸດຊະມານະວານ

[໕໘] ຈິດທີ່ດັບແລ້ວ ກໍຊື່ວ່າດັບຢູ່ແມ່ນບໍ? ຈິດທີ່ດັບຢູ່ກໍຊື່ວ່າດັບແລ້ວແມ່ນບໍ?

ຈິດທີ່ບໍ່ແມ່ນດັບແລ້ວກໍຊື່ວ່າບໍ່ແມ່ນດັບຢູ່ແມ່ນບໍ? ຈິດທີ່ບໍ່ແມ່ນດັບຢູ່ກໍຊື່ວ່າບໍ່ແມ່ນດັບແລ້ວແມ່ນບໍ?

## ໑໙. ອະຕິກກັນຕະກາລະວານ

[໖໐] ຈິດໃດຂອງບຸກຄົນໃດລ່ວງໄປທຸກ ໆ ຂະນະທີ່ເກີດຢູ່ ຊື່ວ່າລ່ວງການແລ້ວ ຈິດນັ້ນຂອງບຸກຄົນນັ້ນລ່ວງໄປທຸກ ໆ ຂະນະທີ່ດັບຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ຈິດໃດຂອງບຸກຄົນໃດລ່ວງໄປທຸກ ໆ ຂະນະທີ່ດັບຢູ່ ຊື່ວ່າລ່ວງການແລ້ວ ຈິດນັ້ນຂອງບຸກຄົນນັ້ນລ່ວງໄປທຸກ ໆ ຂະນະທີ່ເກີດຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ຈິດໃດຂອງບຸກຄົນໃດລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນເກີດຢູ່ ຊື່ວ່າລ່ວງການແລ້ວ

ຈິດນັ້ນຂອງບຸກຄົນນັ້ນລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນດັບຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ຈິດໃດຂອງບຸກຄົນໃດລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນດັບຢູ່ ຊື່ວ່າລ່ວງການແລ້ວ ຈິດນັ້ນຂອງບຸກຄົນນັ້ນລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນເກີດຢູ່ ກໍຊື່ວ່າມລ່ວງການແລ້ວແມ່ນບໍ?

**ອຸດເທດແຫ່ງປຸກຄະລະທຳມະອານ ຈົບ**

## ໔. ສຸດຕັນຕະຈິດຕະມິດສະກະວິເສດ

[໖໑] ຈິດມີຣາຄະຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດປາສະຈາກຣາຄະຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດມີໂທສະຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດປາສະຈາກໂທສະຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດມີໂມຫະຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດປາສະຈາກໂມຫະຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດຫົດຫູ່ຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດຟຸ້ງຊ່ານຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດເປັນມະຫັດຄະຕະຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດບໍ່ເປັນມະຫັກຄະຕະຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດມີທຳອື່ນຍິ່ງກວ່າຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດບໍ່ມີທຳອື່ນຍິ່ງກວ່າຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດເປັນສະມາທິຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດບໍ່ເປັນສະມາທິຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດລຸດພົ້ນແລ້ວຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດບໍ່ລຸດພົ້ນແລ້ວຂອງບຸກຄົນໃດກຳລັງເກີດ ຯລຯ (໑໑໔)

## ໕. ອະພິທຳມະຈິດຕະມິດສະກະວິເສດ

[໖໔] ຈິດທີ່ເປັນກຸສົນຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດທີ່ເປັນອະກຸສົນຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດທີ່ເປັນອັບພະຍາກະຕະຂອງບຸກຄົນໃດກຳລັງເກີດ ຯລຯ
ຈິດທີ່ສຳປະຍຸດດ້ວຍສຸກຂະເວທະນາຂອງບຸກຄົນໃດກຳລັງເກີດ ຯລຯ

(ເພິ່ງຍົກບາລີອຸດເທດໂດຍວິທີນີ້ ຕະຫຼອດຈົນເຖິງຈິດທີ່ເປັນເຫດໃຫ້ສັດຮ້ອງໄຫ້ແລະທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້)

ຈິດທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ຂອງບຸກຄົນໃດກຳລັງເກີດ ບໍ່ແມ່ນກຳລັງດັບ ຈິດທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ຂອງບຸກຄົນນັ້ນກໍຈັກດັບ ບໍ່ແມ່ນຈັກເກີດແມ່ນບໍ?

ຈິດທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ຂອງບຸກຄົນໃດຈັກດັບ ບໍ່ແມ່ນຈັກເກີດ ຈິດທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ຂອງບຸກຄົນນັ້ນກໍກຳລັງເກີດ ບໍ່ແມ່ນກຳລັງດັບແມ່ນບໍ? (໑໑໕)

**ອຸດເທດແຫ່ງມິດສະກະວານ ຈົບ**

**ອຸດເທດວານ ຈົບ**

# ນິດເທດ

## ໑. ສຸດທະຈິດຕະສາມັນຍະ

## ໑. ປຸກຄະລະວານ

## ໑. ອຸບປາທະນິໂຣທະກາລະສຳເພທະວານ

[໖໓] ອະນຸໂລມປຸດສາ. ຈິດຂອງບຸກຄົນໃດກຳລັງເກີດ ບໍ່ແມ່ນກຳລັງດັບ ຈິດຂອງບຸກຄົນນັ້ນກໍຈັກດັບ ບໍ່ແມ່ນຈັກເກີດແມ່ນບໍ?

ວິສັດຊະນາ. ໃນອຸບປາທະຂະນະແຫ່ງປັດສິມຈິດ ຈິດຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ບໍ່ແມ່ນກຳລັງດັບ ແຕ່ຈັກດັບ ບໍ່ແມ່ນຈັກເກີດ ໃນອຸບປາທະຂະນະແຫ່ງຈິດຂອງບຸກຄົນນອກນີ້ ຈິດຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ບໍ່ແມ່ນກຳລັງດັບ ແຕ່ຈັກດັບແລະຈັກເກີດ

ປະຕິໂລມປຸດສາ. ຈິດຂອງບຸກຄົນໃດຈັກດັບ ບໍ່ແມ່ນຈັກເກີດ ຈິດຂອງບຸກຄົນນັ້ນກໍກຳລັງເກີດ ບໍ່ແມ່ນກຳລັງດັບແມ່ນບໍ?

ວິສັດຊະນາ. ແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ແຕ່ກຳລັງດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບ ແຕ່ຈັກເກີດແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດຂອງບຸກຄົນໃດບໍ່ແມ່ນຈັກດັບ ແຕ່ຈັກເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດ ແຕ່ກຳລັງດັບມີບໍ?

ວິ. ບໍ່ມີ

## ໒. ອຸບປາທຸບປັນນະວານ

[໖໔] ອະນຸ. ຈິດຂອງບຸກຄົນໃດກຳລັງເກີດ ຈິດຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດຂອງບຸກຄົນໃດເກີດແລ້ວ ຈິດຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນພັງຄະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນເກີດແລ້ວ ແຕ່ບໍ່ແມ່ນກຳລັງເກີດ ໃນອຸບປາທະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນເກີດແລ້ວກໍແມ່ນ ກຳລັງເກີດກໍແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ໃນພັງຄະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ບໍ່ແມ່ນບໍ່ເກີດແລ້ວ ບຸກຄົນຜູ້ເຂົ້ານິໂຣທະສະມາບັດແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມຈິດຂອງບຸກຄົນເຫຼົ່ານັ້ນ ບໍ່ແມ່ນກຳລັງເກີດກໍແມ່ນ ບໍ່ແມ່ນເກີດແລ້ວກໍແມ່ນ

ປະຕິ. ຈິດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

## ໓. ນິໂຣທຸບປັນນະວານ

[໖໕] ອະນຸ. ຈິດຂອງບຸກຄົນໃດກຳລັງດັບ ຈິດຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດຂອງບຸກຄົນໃດເກີດແລ້ວ ຈິດຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ?

ວິ. ໃນອຸບປາທະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນເກີດແລ້ວ ແຕ່ບໍ່ແມ່ນກຳລັງດັບ ໃນພັງຄະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນເກີດແລ້ວກໍແມ່ນ ກຳລັງດັບກໍແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ໃນອຸບປາທະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນກໍບໍ່ແມ່ນກຳລັງດັບ ແຕ່ບໍ່ແມ່ນບໍ່ເກີດແລ້ວ ບຸກຄົນຜູ້ເຂົ້ານິໂຣທະສະມາບັດ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນ ບໍ່ແມ່ນກຳລັງດັບກໍແມ່ນ ບໍ່ແມ່ນເກີດແລ້ວກໍແມ່ນ

ປະຕິ. ຈິດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ແມ່ນ

## ໔. ອຸບປາທະວານ

[໖໖] ອະນຸ. ຈິດຂອງບຸກຄົນໃດກຳລັງເກີດ ຈິດຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດຂອງບຸກຄົນໃດເຄີຍເກີດ ຈິດຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນພັງຄະຂະນະແຫ່ງຈິດ ບຸກຄົນຜູ້ເຂົ້ານິໂຣທະສະມາບັດ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນເຄີຍເກີດ ແຕ່ບໍ່ແມ່ນກຳລັງເກີດ ໃນອຸບປາທະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນເຄີຍເກີດກໍແມ່ນ ກຳລັງເກີດກໍແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ເຄີຍເກີດ

ປະຕິ. ຈິດຂອງບຸກຄົນໃດບໍ່ເຄີຍເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດມີບໍ?

ວິ. ບໍ່ມີ

[໖໗] ອະນຸ. ຈິດຂອງບຸກຄົນໃດກຳລັງເກີດ ຈິດຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ໃນອຸບປາທະຂະນະແຫ່ງປັດສິມຈິດ ຈິດຂອງບຸກຄົນເຫຼົ່ານັ້ນກຳລັງເກີດ ແຕ່ບໍ່ແມ່ນຈັກເກີດໃນອຸບປາທະຂະນະແຫ່ງຈິດຂອງບຸກຄົນນອກນີ້ ຈິດຂອງບຸກຄົນເຫຼົ່ານັ້ນກຳລັງເກີດກໍແມ່ນ ຈັກເກີດກໍແມ່ນ

ປະຕິ. ຈິດຂອງບຸກຄົນໃດຈັກເກີດ ຈິດຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນພັງຄະຂະນະແຫ່ງຈິດ ບຸກຄົນຜູ້ເຂົ້ານິໂຣທະສະມາບັດແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ບໍ່ແມ່ນກຳລັງເກີດ ໃນອຸບປາທະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນຈັກເກີດກໍແມ່ນ ກຳລັງເກີດກໍແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ໃນພັງຄະຂະນະແຫ່ງຈິດ ບຸກຄົນຜູ້ເຂົ້ານິໂຣທະສະມາບັດແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ບໍ່ແມ່ນຈັກບໍ່ເກີດໃນພັງຄະຂະນະແຫ່ງປັດສິມຈິດ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດກໍແມ່ນ ບໍ່ແມ່ນຈັກເກີດກໍແມ່ນ

ປະຕິ. ຈິດຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ໃນອຸບປາທະຂະນະແຫ່ງປັດສິມຈິດ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ບໍ່ແມ່ນບໍ່ກຳລັງເກີດ ໃນພັງຄະຂະນະແຫ່ງປັດສິມຈິດ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດກໍແມ່ນ ບໍ່ແມ່ນກຳລັງເກີດກໍແມ່ນ

[໖໘] ອະນຸ. ຈິດຂອງບຸກຄົນໃດເຄີຍເກີດ ຈິດຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ໃນພັງຄະຂະນະແຫ່ງປັດສິມຈິດ ຈິດຂອງບຸກຄົນເຫຼົ່ານັ້ນເຄີຍເກີດ ແຕ່ບໍ່ແມ່ນຈັກເກີດ ບຸກຄົນນອກນີ້ ຈິດຂອງບຸກຄົນເຫຼົ່ານັ້ນເຄີຍເກີດກໍແມ່ນ ຈັກເກີດກໍແມ່ນ

ປະຕິ. ຈິດຂອງບຸກຄົນໃດຈັກເກີດ ຈິດຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ເຄີຍເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດມີບໍ?

ວິ. ບໍ່ມີ

ປະຕິ. ຈິດຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ເຄີຍເກີດ

# ໕. ນິໂຣທະວານ

[໖໙] ອະນຸ. ຈິດຂອງບຸກຄົນໃດກຳລັງດັບ ຈິດຂອງບຸກຄົນນັ້ນກໍເຄີຍດັບແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດຂອງບຸກຄົນໃດເຄີຍດັບ ຈິດຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ?

ວິ. ໃນອຸບປາທະຂະນະແຫ່ງຈິດ ບຸກຄົນຜູ້ເຂົ້ານິໂຣທະສະມາບັດ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນເຄີຍດັບ ແຕ່ບໍ່ແມ່ນກຳລັງດັບ ໃນພັງຄະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນເຄີຍດັບກໍແມ່ນ ກຳລັງດັບກໍແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ເຄີຍດັບ

ປະຕິ. ຈິດຂອງບຸກຄົນໃດບໍ່ເຄີຍດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບມີບໍ?

ວິ. ບໍ່ມີ

[໗໐] ອະນຸ. ຈິດຂອງບຸກຄົນໃດກຳລັງດັບ ຈິດຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ໃນພັງຄະຂະນະແຫ່ງປັດສິມຈິດ ຈິດຂອງບຸກຄົນເຫຼົ່ານັ້ນກຳລັງດັບ ແຕ່ບໍ່ແມ່ນຈັກດັບ ໃນພັງຄະຂະນະແຫ່ງຈິດຂອງບຸກຄົນນອກນີ້ ຈິດຂອງບຸກຄົນເຫຼົ່ານັ້ນກຳລັງດັບກໍແມ່ນຈັກດັບກໍແມ່ນ

ປະຕິ. ຈິດຂອງບຸກຄົນໃດຈັກດັບ ຈິດຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ?

ວິ. ໃນອຸບປາທະຂະນະແຫ່ງຈິດ ບຸກຄົນຜູ້ເຂົ້ານິໂຣທະສະມາບັດແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ບໍ່ແມ່ນກຳລັງດັບ ໃນພັງຄະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນຈັກດັບກໍແມ່ນ ກຳລັງດັບກໍແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ຈັກດັບ

ປະຕິ. ຈິດຂອງບຸກຄົນໃດບໍ່ແມ່ນຈັກດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ກຳລັງດັບ

[໗໑] ອະນຸ. ຈິດຂອງບຸກຄົນໃດເຄີຍດັບ ຈິດຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ໃນພັງຄະຂະນະແຫ່ງປັດສິມຈິດ ຈິດຂອງບຸກຄົນເຫຼົ່ານັ້ນເຄີຍດັບ ແຕ່ບໍ່ແມ່ນຈັກດັບ ບຸກຄົນນອກນີ້ ຈິດຂອງບຸກຄົນເຫຼົ່ານັ້ນເຄີຍດັບກໍແມ່ນ ກຳລັງດັບກໍແມ່ນ

ປະຕິ. ຈິດຂອງບຸກຄົນໃດຈັກດັບ ຈິດຂອງບຸກຄົນນັ້ນກໍເຄີຍດັບແມ່ນບໍ?

ວິ. ແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ເຄີຍດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບມີບໍ?

ວິ. ບໍ່ມີ

ປະຕິ. ຈິດຂອງບຸກຄົນໃດບໍ່ແມ່ນຈັກດັບ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ເຄີຍດັບ

## ຝ. ອຸບປາທະນິໂຣທະວານ

[໗໔] ອະນຸ. ຈິດຂອງບຸກຄົນໃດກຳລັງເກີດ ຈິດຂອງບຸກຄົນນັ້ນກໍເຄີຍດັບແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດຂອງບຸກຄົນໃດເຄີຍດັບ ຈິດຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນພັງຄະຂະນະແຫ່ງຈິດ ບຸກຄົນຜູ້ເຂົ້ານິໂຣທະສະມາບັດແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນເຄີຍດັບ ແຕ່ບໍ່ແມ່ນກຳລັງເກີດ ໃນອຸບປາທະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນເຄີຍດັບກໍແມ່ນ ກຳລັງເກີດກໍແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ເຄີຍດັບ

ປະຕິ. ຈິດຂອງບຸກຄົນໃດບໍ່ເຄີຍດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດມີບໍ?

ວິ. ບໍ່ມີ

[໗໕] ອະນຸ. ຈິດຂອງບຸກຄົນໃດກຳລັງເກີດ ຈິດຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດຂອງບຸກຄົນໃດຈັກດັບ ຈິດຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນພັງຄະຂະນະແຫ່ງຈິດ ບຸກຄົນຜູ້ເຂົ້ານິໂຣທະສະມາບັດແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນຈັກດັບ ແຕ່ບໍ່ແມ່ນກຳລັງເກີດ ໃນອຸບປາທະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນຈັກດັບກໍແມ່ນ ກຳລັງເກີດກໍແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ໃນພັງຄະຂະນະແຫ່ງຈິດ ບຸກຄົນຜູ້ເຂົ້ານິໂຣທະສະມາບັດແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແຕ່ບໍ່ແມ່ນຈັກບໍ່ດັບ ໃນພັງຄະຂະນະແຫ່ງປັດສິມຈິດ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດກໍແມ່ນ ບໍ່ແມ່ນຈັກດັບກໍແມ່ນ

ປະຕິ. ຈິດຂອງບຸກຄົນໃດບໍ່ແມ່ນຈັກດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

[໗໖] ອະນຸ. ຈິດຂອງບຸກຄົນໃດເຄີຍເກີດ ຈິດຂອງບຸກຄົນນັ້ນກໍຈັກດັບແມ່ນບໍ?

ວິ. ໃນພັງຄະຂະນະແຫ່ງປັດສິມຈິດ ຈິດຂອງບຸກຄົນເຫຼົ່ານັ້ນເຄີຍເກີດ ແຕ່ບໍ່ແມ່ນຈັກດັບ ບຸກຄົນນອກຈາກນີ້ ຈິດຂອງບຸກຄົນເຫຼົ່ານັ້ນເຄີຍເກີດກໍແມ່ນ ຈັກດັບກໍແມ່ນ

ປະຕິ. ຈິດຂອງບຸກຄົນໃດຈັກດັບ ຈິດຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ເຄີຍເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບມີບໍ?

ວິ. ບໍ່ມີ

ປະຕິ. ຈິດຂອງບຸກຄົນໃດບໍ່ແມ່ນຈັກດັບ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ເຄີຍເກີດ

## ໗. ອຸບປັດຊະມານະນະນິໂຣທະວານ

[໗໔] ອະນຸ. ຈິດຂອງບຸກຄົນໃດກຳລັງເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຈິດຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບຸກຄົນຜູ້ເຂົ້ານິໂຣທະສະມາບັດ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງດັບແລະບໍ່ແມ່ນກຳລັງເກີດ ໃນອຸບປາທະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງດັບກໍແມ່ນ ກຳລັງເກີດກໍແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈິດຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ?

ວິ. ບຸກຄົນຜູ້ເຂົ້ານິໂຣທະສະມາບັດແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດ ແລະບໍ່ແມ່ນກຳລັງດັບ ໃນພັງຄະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນກຳລັງເກີດກໍແມ່ນ ກຳລັງດັບກໍແມ່ນ

ປະຕິ. ຈິດຂອງບຸກຄົນໃດກຳລັງດັບ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

## ໘. ອຸບປັດຊະມານຸບປັນນະວານ

[໗໖] ອະນຸ. ຈິດຂອງບຸກຄົນໃດເກີດຢູ່ ຈິດຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດຂອງບຸກຄົນໃດເກີດແລ້ວ ຈິດຂອງບຸກຄົນນັ້ນກໍເກີດຢູ່ແມ່ນບໍ?

ວິ. ໃນພັງຄະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນເກີດແລ້ວ ແຕ່ບໍ່ແມ່ນເກີດຢູ່ໃນອຸບປາທະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນເກີດແລ້ວກໍແມ່ນ ເກີດຢູ່ກໍແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ແມ່ນເກີດຢູ່ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ໃນພັງຄະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນເກີດຢູ່ ແຕ່ບໍ່ແມ່ນບໍ່ເກີດແລ້ວ ບຸກຄົນຜູ້ເຂົ້ານິໂຣທະສະມາບັດແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນເກີດຢູ່ກໍແມ່ນ ບໍ່ແມ່ນເກີດແລ້ວກໍແມ່ນ

ປະຕິ. ຈິດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນເກີດຢູ່ແມ່ນບໍ?

ວິ. ແມ່ນ

## ໙. ນິຣຸດຊະມານຸບປັນນະວານ

[໗໗] ອະນຸ. ຈິດຂອງບຸກຄົນໃດດັບຢູ່ ຈິດຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດຂອງບຸກຄົນໃດເກີດແລ້ວ ຈິດຂອງບຸກຄົນນັ້ນກໍດັບຢູ່ແມ່ນບໍ?

ວິ. ໃນອຸບປາທະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນເກີດແລ້ວ ແຕ່ບໍ່ແມ່ນດັບຢູ່ໃນພັງຄະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນເກີດແລ້ວກໍແມ່ນ ດັບຢູ່ກໍແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ແມ່ນດັບຢູ່ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ໃນອຸບປາທະຂະນະແຫ່ງຈິດ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນດັບຢູ່ ແຕ່ບໍ່ແມ່ນບໍ່ເກີດແລ້ວ ບຸກຄົນຜູ້ເຂົ້ານິໂຣທະສະມາບັດແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນດັບຢູ່ກໍແມ່ນ ບໍ່ແມ່ນເກີດແລ້ວກໍແມ່ນ

ປະຕິ. ຈິດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນດັບຢູ່ແມ່ນບໍ?

ວິ. ແມ່ນ

## ໑໐. ອຸບປັນນຸບປາທະວານ

[໗໘] ອະນຸ. ຈິດຂອງບຸກຄົນໃດເກີດແລ້ວ ຈິດຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດຂອງບຸກຄົນໃດເຄີຍເກີດ ຈິດຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?

ວິ. ບຸກຄົນຜູ້ເຂົ້ານິໂຣທະສະມາບັດ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນເຄີຍເກີດ ແຕ່ບໍ່ແມ່ນເກີດແລ້ວ ບຸກຄົນຜູ້ພ້ອມພຽງດ້ວຍຈິດ ຈິດຂອງບຸກຄົນເຫຼົ່ານັ້ນເຄີຍເກີດກໍແມ່ນ ເກີດແລ້ວກໍແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ເຄີຍເກີດ

ປະຕິ. ຈິດຂອງບຸກຄົນໃດບໍ່ເຄີຍເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວມີບໍ?

ວິ. ບໍ່ມີ

[໗໙] ອະນຸ. ຈິດຂອງບຸກຄົນໃດເກີດແລ້ວ ຈິດຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ພ້ອມພຽງດ້ວຍປັດສິມຈິດ ຈິດຂອງບຸກຄົນເຫຼົ່ານັ້ນເກີດແລ້ວ ແຕ່ບໍ່ແມ່ນຈັກເກີດບຸກຄົນນອກນີ້ຜູ້ພ້ອມພຽງດ້ວຍຈິດ ຈິດຂອງບຸກຄົນເຫຼົ່ານັ້ນເກີດແລ້ວກໍແມ່ນ ຈັກເກີດກໍແມ່ນ

ປະຕິ. ຈິດຂອງບຸກຄົນໃດຈັກເກີດ ຈິດຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?

ວິ. ບຸກຄົນຜູ້ເຂົ້ານິໂຣທະສະມາບັດ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈິດຂອງບຸກຄົນເຫຼົ່ານັ້ນຈັກເກີດ ແຕ່ບໍ່ແມ່ນເກີດແລ້ວ ບຸກຄົນຜູ້ພ້ອມພຽງດ້ວຍຈິດ ຈິດຂອງບຸກຄົນເຫຼົ່ານັ້ນຈັກເກີດກໍແມ່ນ ເກີດແລ້ວກໍແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ຈັກເກີດ

ປະຕິ. ຈິດຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ເກີດແລ້ວ

## ໑໑. ອະຕີຕານາຄະຕະວານ

[໗໐] ອະນຸ. ຈິດຂອງບຸກຄົນໃດເຄີຍເກີດ ຈິດຂອງບຸກຄົນນັ້ນບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດຂອງບຸກຄົນໃດຈັກເກີດ ຈິດຂອງບຸກຄົນນັ້ນບໍ່ແມ່ນເກີດແລ້ວ ຈິດຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈິດຂອງບຸກຄົນໃດບໍ່ເຄີຍເກີດ ຈິດຂອງບຸກຄົນນັ້ນບໍ່ແມ່ນບໍ່ເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດມີບໍ?

ວິ. ບໍ່ມີ

ປະຕິ. ຈິດຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈິດຂອງບຸກຄົນນັ້ນບໍ່ແມ່ນບໍ່ເກີດແລ້ວ ຈິດຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ເຄີຍເກີດ

## ໑໘. ອຸບປັນນຸບປັດຊະມານະວານ

[໗໑] ອະນຸ. ຈິດທີ່ເກີດແລ້ວ ກໍຊື່ວ່າເກີດຢູ່ແມ່ນບໍ?

ວິ. ໃນພັງຄະຂະນະ ຈິດເກີດແລ້ວ ແຕ່ບໍ່ແມ່ນເກີດຢູ່ ໃນອຸບປາທະຂະນະ ຈິດເກີດແລ້ວກໍແມ່ນ ເກີດຢູ່ກໍແມ່ນ

ປະຕິ. ຈິດທີ່ເກີດຢູ່ ກໍຊື່ວ່າເກີດແລ້ວແມ່ນບໍ?

ວິ. ແມ່ນ

ອະນຸ. ຈິດທີ່ບໍ່ແມ່ນເກີດແລ້ວ ກໍຊື່ວ່າບໍ່ແມ່ນເກີດຢູ່ແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດທີ່ບໍ່ແມ່ນເກີດຢູ່ ກໍຊື່ວ່າບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ໃນພັງຄະຂະນະ ຈິດບໍ່ແມ່ນເກີດຢູ່ ແຕ່ບໍ່ແມ່ນບໍ່ເກີດແລ້ວ ຈິດທີ່ເປັນອະດີດແລະອະນາຄົດ ບໍ່ແມ່ນເກີດຢູ່ກໍແມ່ນ ບໍ່ແມ່ນເກີດແລ້ວກໍແມ່ນ

## ໑໓. ນິຣຸດທະນິຣຸດຊະມານະວານ

[໗໔] ອະນຸ. ຈິດທີ່ດັບແລ້ວ ກໍຊື່ວ່າດັບຢູ່ແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດທີ່ດັບຢູ່ ກໍຊື່ວ່າດັບແລ້ວແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດທີ່ບໍ່ແມ່ນດັບແລ້ວ ກໍຊື່ວ່າບໍ່ແມ່ນດັບຢູ່ແມ່ນບໍ?

ວິ. ໃນພັງຄະຂະນະ ຈິດບໍ່ແມ່ນດັບແລ້ວ ແຕ່ບໍ່ແມ່ນບໍ່ດັບຢູ່ ໃນອຸບປາທະຂະນະ ຈິດທີ່ເປັນອະນາຄົດ ບໍ່ແມ່ນດັບແລ້ວກໍແມ່ນ ບໍ່ແມ່ນດັບຢູ່ກໍແມ່ນ

ປະຕິ. ຈິດທີ່ບໍ່ແມ່ນດັບຢູ່ ກໍຊື່ວ່າບໍ່ແມ່ນດັບແລ້ວແມ່ນບໍ?

ວິ. ຈິດທີ່ເປັນອະດີດບໍ່ແມ່ນດັບຢູ່ ແຕ່ບໍ່ແມ່ນບໍ່ດັບແລ້ວ ໃນອຸບປາທະຂະນະ ຈິດທີ່ເປັນອະນາຄົດ ບໍ່ແມ່ນດັບຢູ່ກໍແມ່ນ ບໍ່ແມ່ນດັບແລ້ວກໍແມ່ນ

## ໑໔. ອະຕິກະກັນຕະກາລະວານ

[໗໙] ອະນຸ. ຈິດຂອງບຸກຄົນໃດລ່ວງໄປທຸກ ໆ ຂະນະທີ່ເກີດຢູ່ ຊື່ວ່າລ່ວງການແລ້ວ ຈິດຂອງບຸກຄົນນັ້ນລ່ວງໄປທຸກ ໆ ຂະນະທີ່ດັບຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ວິ. ໃນພັງຄະຂະນະ ຈິດລ່ວງໄປທຸກອຸບປາທະຂະນະ ແຕ່ຍັງບໍ່ລ່ວງພັງຄະຂະນະ ຈິດທີ່ເປັນອະດີດລ່ວງໄປທຸກອຸບປາທະຂະນະກໍແມ່ນ ລ່ວງໄປທຸກພັງຄະຂະນະກໍແມ່ນ

ປະຕິ. ຈິດຂອງບຸກຄົນໃດລ່ວງໄປທຸກ ໆ ຂະນະທີ່ດັບຢູ່ ຊື່ວ່າລ່ວງການແລ້ວ ຈິດຂອງບຸກຄົນນັ້ນລ່ວງໄປທຸກ ໆ ຂະນະທີ່ເກີດຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ວິ. ຈິດທີ່ເປັນອະດີດ ຯລຯ.

ອະນຸ. ຈິດຂອງບຸກຄົນໃດລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນເກີດຢູ່ ຊື່ວ່າລ່ວງການແລ້ວ ຈິດຂອງບຸກຄົນນັ້ນລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນດັບຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ວິ. ໃນອຸບປາທະຂະນະ ຈິດທີ່ເປັນອະນາຄົດ ຯລຯ.

ປະຕິ. ຈິດຂອງບຸກຄົນໃດລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນດັບຢູ່ ຊື່ວ່າລ່ວງການແລ້ວ ຈິດຂອງບຸກຄົນນັ້ນລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນເກີດຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ວິ. ໃນພັງຄະຂະນະ ຈິດບໍ່ລ່ວງພັງຄະຂະນະ ແຕ່ບໍ່ແມ່ນບໍ່ລ່ວງອຸບປາທະຂະນະ ໃນອຸບປາທະຂະນະ ຈິດທີ່ເປັນອະນາຄົດ ບໍ່ລ່ວງພັງຄະຂະນະກໍແມ່ນ ບໍ່ລ່ວງອຸບປາທະຂະນະກໍແມ່ນ

**ນິດເທດແຫ່ງປຸກຄະລະວານ ຈົບ**

# ໑. ສຸດທະຈິດຕະສາມັນຍະ

## ໔. ທຳມະວານ

### ໑. ອຸບປາທະນິໂຣທະກາລະສຳເພທະວານ

[໗໔] ອະນຸ. ຈິດໃດກຳລັງເກີດ ບໍ່ແມ່ນກຳລັງດັບ ຈິດນັ້ນກໍຈັກດັບ ບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດໃດຈັກດັບ ບໍ່ແມ່ນຈັກເກີດ ຈິດນັ້ນກໍກຳລັງເກີດ ບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ແມ່ນ

ອະນຸ. ຈິດໃດບໍ່ແມ່ນກຳລັງເກີດ ແຕ່ກຳລັງດັບ ຈິດນັ້ນກໍບໍ່ແມ່ນຈັກດັບແຕ່ຈັກເກີດແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດບໍ່ແມ່ນຈັກດັບ ແຕ່ຈັກເກີດ ຈິດນັ້ນກໍບໍ່ແມ່ນກຳລັງເກີດ ແຕ່ກຳລັງດັບມີບໍ?

ວິ. ບໍ່ມີ

### ໔. ອຸບປາທຸບປັນນະວານ

[໗໕] ອະນຸ. ຈິດໃດກຳລັງເກີດ ຈິດນັ້ນກໍເກີດແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດໃດເກີດແລ້ວ ຈິດນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນພັງຄະຂະນະ ຈິດເກີດແລ້ວ ແຕ່ບໍ່ແມ່ນກຳລັງເກີດ ໃນອຸບປາທະຂະນະ ຈິດເກີດແລ້ວກໍແມ່ນ ກຳລັງເກີດກໍແມ່ນ

ອະນຸ. ຈິດໃດບໍ່ແມ່ນກຳລັງເກີດ ຈິດນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ໃນພັງຄະຂະນະ ຈິດບໍ່ແມ່ນກຳລັງເກີດ ແຕ່ບໍ່ແມ່ນບໍ່ເກີດແລ້ວ ຈິດທີ່ເປັນອະດີດແລະອະນາຄົດ ບໍ່ແມ່ນກຳລັງເກີດກໍແມ່ນ ບໍ່ແມ່ນເກີດແລ້ວກໍແມ່ນ

ປະຕິ. ຈິດໃດບໍ່ແມ່ນເກີດແລ້ວ ຈິດນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

### ໖. ນິໂຣທຸບປັນນະວານ

[໗໖] ອະນຸ. ຈິດໃດກຳລັງດັບ ຈິດນັ້ນກໍເກີດແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດໃດເກີດແລ້ວ ຈິດນັ້ນກໍກຳລັງດັບແມ່ນບໍ?

ວິ. ໃນອຸບປາທະຂະນະ ຈິດເກີດແລ້ວ ແຕ່ບໍ່ແມ່ນກຳລັງດັບ ໃນພັງຄະຂະນະ ຈິດເກີດແລ້ວກໍແມ່ນ ກຳລັງດັບກໍແມ່ນ

ອະນຸ. ຈິດໃດບໍ່ແມ່ນກຳລັງດັບ ຈິດນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ໃນອຸບປາທະຂະນະ ຈິດບໍ່ແມ່ນກຳລັງດັບ ແຕ່ບໍ່ແມ່ນບໍ່ເກີດແລ້ວ ຈິດທີ່ເປັນອະດີດແລະອະນາຄົດ ບໍ່ແມ່ນກຳລັງດັບກໍແມ່ນ ບໍ່ແມ່ນເກີດແລ້ວກໍແມ່ນ

ປະຕິ. ຈິດໃດບໍ່ແມ່ນເກີດແລ້ວ ຈິດນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ແມ່ນ

## ໔. ອຸບປາທະວານ

[໘໗] ອະນຸ. ຈິດໃດກຳລັງເກີດ ຈິດນັ້ນກໍເຄີຍເກີດແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດເຄີຍເກີດ ຈິດນັ້ນກໍກຳລັງເກີດແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດບໍ່ແມ່ນກຳລັງເກີດ ຈິດນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ຈິດທີ່ເປັນອະດີດບໍ່ແມ່ນກຳລັງເກີດ ແຕ່ບໍ່ແມ່ນບໍ່ເຄີຍເກີດ ໃນພັງຄະຂະນະ ຈິດທີ່ເປັນອະນາຄົດ ບໍ່ແມ່ນກຳລັງເກີດກໍແມ່ນ ບໍ່ເຄີຍເກີດກໍແມ່ນ

ປະຕິ. ຈິດໃດບໍ່ເຄີຍເກີດ ຈິດນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ໃນອຸບປາທະຂະນະ ຈິດບໍ່ເຄີຍເກີດ ແຕ່ບໍ່ແມ່ນບໍ່ກຳລັງເກີດ ໃນພັງຄະຂະນະ ຈິດທີ່ເປັນອະນາຄົດບໍ່ເຄີຍເກີດກໍແມ່ນ ບໍ່ແມ່ນກຳລັງເກີດກໍແມ່ນ

[໘໘] ອະນຸ. ຈິດໃດກຳລັງເກີດ ຈິດນັ້ນກໍຈັກເກີດແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດຈັກເກີດ ຈິດນັ້ນກໍກຳລັງເກີດແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດບໍ່ແມ່ນກຳລັງເກີດ ຈິດນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ຈິດທີ່ເປັນອະນາຄົດບໍ່ແມ່ນກຳລັງເກີດ ແຕ່ບໍ່ແມ່ນຈັກບໍ່ເກີດ ໃນພັງຄະຂະນະ ຈິດທີ່ເປັນອະດີດ ບໍ່ແມ່ນກຳລັງເກີດກໍແມ່ນ ບໍ່ແມ່ນຈັກເກີດກໍແມ່ນ

ປະຕິ. ຈິດໃດບໍ່ແມ່ນຈັກເກີດ ຈິດນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ໃນອຸບປາທະຂະນະ ຈິດບໍ່ແມ່ນຈັກເກີດ ແຕ່ບໍ່ແມ່ນບໍ່ກຳລັງເກີດ ໃນພັງຄະຂະນະ ຈິດທີ່ເປັນອະດີດບໍ່ແມ່ນຈັກເກີດກໍແມ່ນ ບໍ່ແມ່ນກຳລັງເກີດກໍແມ່ນ

[໘໙] ອະນຸ. ຈິດໃດເຄີຍເກີດ ຈິດນັ້ນກໍຈັກເກີດແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດຈັກເກີດ ຈິດນັ້ນກໍເຄີຍເກີດແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດບໍ່ເຄີຍເກີດ ຈິດນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ຈິດທີ່ເປັນອະນາຄົດບໍ່ເຄີຍເກີດ ແຕ່ບໍ່ແມ່ນຈັກບໍ່ເກີດ ຈິດທີ່ເປັນປັດຈຸບັນບໍ່ເຄີຍເກີດກໍແມ່ນ ບໍ່ແມ່ນຈັກເກີດກໍແມ່ນ

ປະຕິ. ຈິດໃດບໍ່ແມ່ນຈັກເກີດ ຈິດນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ຈິດທີ່ເປັນອະດີດບໍ່ແມ່ນຈັກເກີດ ແຕ່ບໍ່ແມ່ນບໍ່ເຄີຍເກີດ ຈິດທີ່ເປັນປັດຈຸບັນ ບໍ່ແມ່ນຈັກເກີດກໍແມ່ນ ບໍ່ເຄີຍເກີດກໍແມ່ນ

## ໕. ນິໂຣທະວານ

[໙໐] ອະນຸ. ຈິດໃດກຳລັງດັບ ຈິດນັ້ນກໍເຄີຍດັບແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດເຄີຍດັບ ຈິດນັ້ນກໍກຳລັງດັບແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດບໍ່ແມ່ນກຳລັງດັບ ຈິດນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ຈິດທີ່ເປັນອະດີດບໍ່ແມ່ນກຳລັງດັບ ແຕ່ບໍ່ແມ່ນບໍ່ເຄີຍດັບ ໃນອຸບປາທະຂະນະຈິດທີ່ເປັນອະນາຄົດບໍ່ແມ່ນກຳລັງດັບກໍແມ່ນ ບໍ່ເຄີຍດັບກໍແມ່ນ

ປະຕິ. ຈິດໃດບໍ່ເຄີຍດັບ ຈິດນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ໃນພັງຄະຂະນະຈິດບໍ່ເຄີຍດັບ ແຕ່ບໍ່ແມ່ນບໍ່ກຳລັງດັບ ໃນອຸບປາທະຂະນະ ຈິດທີ່ເປັນອະນາຄົດບໍ່ເຄີຍດັບກໍແມ່ນ ບໍ່ແມ່ນກຳລັງດັບກໍແມ່ນ

[໙໑] ອະນຸ. ຈິດໃດກຳລັງດັບ ຈິດນັ້ນກໍຈັກດັບແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດຈັກດັບ ຈິດນັ້ນກໍກຳລັງດັບແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດບໍ່ແມ່ນກຳລັງດັບ ຈິດນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ໃນອຸບປາທະຂະນະ ຈິດທີ່ເປັນອະນາຄົດບໍ່ແມ່ນກຳລັງດັບ ແຕ່ບໍ່ແມ່ນຈັກບໍ່ດັບ ຈິດທີ່ເປັນອະດີດບໍ່ແມ່ນກຳລັງດັບກໍແມ່ນ ບໍ່ແມ່ນຈັກດັບກໍແມ່ນ

ປະຕິ. ຈິດໃດບໍ່ແມ່ນຈັກດັບ ຈິດນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ໃນພັງຄະຂະນະ ຈິດບໍ່ແມ່ນຈັກດັບ ແຕ່ບໍ່ແມ່ນບໍ່ກຳລັງດັບ ຈິດທີ່ເປັນອະດີດບໍ່ແມ່ນຈັກດັບກໍແມ່ນ ບໍ່ແມ່ນກຳລັງດັບກໍແມ່ນ

[໙໘] ອະນຸ. ຈິດໃດເຄີຍດັບ ຈິດນັ້ນກໍຈັກດັບແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດຈັກດັບ ຈິດນັ້ນກໍເຄີຍດັບແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດບໍ່ເຄີຍດັບ ຈິດນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ໃນອຸບປາທະຂະນະ ຈິດທີ່ເປັນອະນາຄົດບໍ່ເຄີຍດັບ ແຕ່ບໍ່ແມ່ນຈັກບໍ່ດັບ ໃນພັງຄະຂະນະຈິດບໍ່ເຄີຍດັບກໍແມ່ນ ບໍ່ແມ່ນຈັກດັບກໍແມ່ນ

ປະຕິ. ຈິດໃດບໍ່ແມ່ນຈັກດັບ ຈິດນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ຈິດທີ່ເປັນອະດີດບໍ່ແມ່ນຈັກດັບ ແຕ່ບໍ່ແມ່ນບໍ່ເຄີຍດັບ ໃນພັງຄະຂະນະ ຈິດບໍ່ແມ່ນຈັກດັບກໍແມ່ນ ບໍ່ເຄີຍເກີດກໍແມ່ນ

## ຜ. ອຸບປາທະນິໂຣທະວານ

[໗໓] ອະນຸ. ຈິດໃດກຳລັງເກີດ ຈິດນັ້ນກໍເຄີຍດັບແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດເຄີຍດັບ ຈິດນັ້ນກໍກຳລັງເກີດແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດບໍ່ແມ່ນກຳລັງເກີດ ຈິດນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ຈິດທີ່ເປັນອະດີດບໍ່ແມ່ນກຳລັງເກີດ ແຕ່ບໍ່ແມ່ນບໍ່ເຄີຍດັບ ໃນພັງຄະຂະນະຈິດທີ່ເປັນອະນາຄົດບໍ່ແມ່ນກຳລັງເກີດກໍແມ່ນ ບໍ່ເຄີຍດັບກໍແມ່ນ

ປະຕິ. ຈິດໃດບໍ່ເຄີຍດັບ ຈິດນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ໃນອຸບປາທະຂະນະ ຈິດບໍ່ເຄີຍດັບ ແຕ່ບໍ່ແມ່ນບໍ່ກຳລັງເກີດ ໃນພັງຄະຂະນະຈິດທີ່ເປັນອະນາຄົດບໍ່ເຄີຍດັບກໍແມ່ນ ບໍ່ແມ່ນກຳລັງເກີດກໍແມ່ນ

[໗໔] ອະນຸ. ຈິດໃດກຳລັງເກີດ ຈິດນັ້ນກໍຈັກດັບແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດໃດຈັກດັບ ຈິດນັ້ນກໍກຳລັງເກີດແມ່ນບໍ?

ວິ. ຈິດທີ່ເປັນອະນາຄົດຈັກດັບ ແຕ່ບໍ່ແມ່ນກຳລັງເກີດ ໃນອຸບປາທະຂະນະຈິດຈັກດັບກໍແມ່ນກຳລັງເກີດກໍແມ່ນ

ອະນຸ. ຈິດໃດບໍ່ແມ່ນກຳລັງເກີດ ຈິດນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ຈິດທີ່ເປັນອະນາຄົດບໍ່ແມ່ນກຳລັງເກີດ ແຕ່ບໍ່ແມ່ນຈັກບໍ່ດັບໃນພັງຄະຂະນະ ຈິດທີ່ເປັນອະດີດບໍ່ແມ່ນກຳລັງເກີດກໍແມ່ນ ບໍ່ແມ່ນຈັກດັບກໍແມ່ນ

ປະຕິ. ຈິດໃດບໍ່ແມ່ນຈັກດັບ ຈິດນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

[໙໕] ອະນຸ. ຈິດໃດເຄີຍເກີດ ຈິດນັ້ນກໍຈັກດັບແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດຈັກດັບ ຈິດນັ້ນກໍເຄີຍເກີດແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດບໍ່ເຄີຍເກີດ ຈິດນັ້ນກໍບໍ່ແມ່ນຈັກດັບແມ່ນບໍ?

ວິ. ໃນອຸບປາທະຂະນະ ຈິດທີ່ເປັນອະນາຄົດບໍ່ເຄີຍເກີດ ແຕ່ບໍ່ແມ່ນຈັກບໍ່ດັບໃນພັງຄະຂະນະຈິດບໍ່ເຄີຍເກີດກໍແມ່ນ ບໍ່ແມ່ນຈັກດັບກໍແມ່ນ

ປະຕິ. ຈິດໃດບໍ່ແມ່ນຈັກດັບ ຈິດນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ຈິດທີ່ເປັນອະດີດບໍ່ແມ່ນຈັກດັບ ແຕ່ບໍ່ແມ່ນບໍ່ເຄີຍເກີດ ໃນພັງຄະຂະນະຈິດບໍ່ແມ່ນຈັກດັບກໍແມ່ນ ບໍ່ເຄີຍເກີດກໍແມ່ນ

## ໗. ອຸບປັດຊະມານະນະນິໂຣທະວານ

[໙໖] ອະນຸ. ຈິດໃດກຳລັງເກີດ ຈິດນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດໃດບໍ່ແມ່ນກຳລັງດັບ ຈິດນັ້ນກໍກຳລັງເກີດແມ່ນບໍ?

ວິ. ຈິດທີ່ເປັນອະດີດແລະອະນາຄົດບໍ່ແມ່ນກຳລັງດັບ ແຕ່ບໍ່ແມ່ນກຳລັງເກີດໃນອຸບປາທະຂະນະຈິດບໍ່ແມ່ນກຳລັງດັບກໍແມ່ນ ກຳລັງເກີດກໍແມ່ນ

ອະນຸ. ຈິດໃດບໍ່ແມ່ນກຳລັງເກີດ ຈິດນັ້ນກໍກຳລັງດັບແມ່ນບໍ?

ວິ. ຈິດທີ່ເປັນອະດີດແລະອະນາຄົດບໍ່ແມ່ນກຳລັງເກີດ ແຕ່ບໍ່ແມ່ນກຳລັງດັບ ໃນພັງຄະຂະນະຈິດບໍ່ແມ່ນກຳລັງເກີດກໍແມ່ນ ກຳລັງດັບກໍແມ່ນ

ປະຕິ. ຈິດໃດກຳລັງດັບ ຈິດນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

## ໘. ອຸບປັດຊະມານຸບປັນນະວານ

[໙໗] ອະນຸ. ຈິດໃດເກີດຢູ່ ຈິດນັ້ນກໍເກີດແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດໃດເກີດແລ້ວ ຈິດນັ້ນກໍເກີດຢູ່ແມ່ນບໍ?

ວິ. ໃນພັງຄະຂະນະ ຈິດເກີດແລ້ວ ແຕ່ບໍ່ແມ່ນເກີດຢູ່ ໃນອຸບປາທະຂະນະ ຈິດເກີດແລ້ວກໍແມ່ນ ເກີດຢູ່ກໍແມ່ນ

ອະນຸ. ຈິດໃດບໍ່ແມ່ນເກີດຢູ່ ຈິດນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ໃນພັງຄະຂະນະ ຈິດບໍ່ແມ່ນເກີດຢູ່ ແຕ່ບໍ່ແມ່ນບໍ່ເກີດແລ້ວ ຈິດທີ່ເປັນອະດີດແລະທີ່ເປັນອະນາຄົດ ບໍ່ແມ່ນເກີດຢູ່ກໍແມ່ນ ບໍ່ແມ່ນເກີດແລ້ວກໍແມ່ນ

ປະຕິ. ຈິດໃດບໍ່ແມ່ນເກີດແລ້ວ ຈິດນັ້ນກໍບໍ່ແມ່ນເກີດຢູ່ແມ່ນບໍ?

ວິ. ແມ່ນ

## ໙. ນິຣຸດຊະມານຸບປັນນະວານ

[໙໗] ອະນຸ. ຈິດໃດດັບຢູ່ ຈິດນັ້ນກໍເກີດແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດໃດເກີດແລ້ວ ຈິດນັ້ນກໍດັບຢູ່ແມ່ນບໍ?

ວິ. ໃນອຸບປາທະຂະນະ ຈິດເກີດແລ້ວ ແຕ່ບໍ່ແມ່ນດັບຢູ່ ໃນພັງຄະຂະນະ ຈິດເກີດແລ້ວກໍແມ່ນ ດັບຢູ່ກໍແມ່ນ

ອະນຸ. ຈິດໃດບໍ່ແມ່ນດັບຢູ່ ຈິດນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ໃນອຸບປາທະຂະນະ ຈິດບໍ່ແມ່ນດັບຢູ່ ແຕ່ບໍ່ແມ່ນບໍ່ເກີດແລ້ວ ຈິດທີ່ເປັນອະດີດແລະທີ່ເປັນອະນາຄົດ ບໍ່ແມ່ນເກີດຢູ່ກໍແມ່ນ ບໍ່ແມ່ນເກີດແລ້ວກໍແມ່ນ

ປະຕິ. ຈິດໃດບໍ່ແມ່ນເກີດແລ້ວ ຈິດນັ້ນກໍບໍ່ແມ່ນດັບຢູ່ແມ່ນບໍ?

ວິ. ແມ່ນ

## ໑໐. ອຸບປັນນຸບປາທະວານ

[໙໙] ອະນຸ. ຈິດໃດເກີດແລ້ວ ຈິດນັ້ນກໍເຄີຍເກີດແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດເຄີຍເກີດ ຈິດນັ້ນກໍເກີດແລ້ວແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດບໍ່ແມ່ນເກີດແລ້ວ ຈິດນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ຈິດທີ່ເປັນອະດີດບໍ່ແມ່ນເກີດແລ້ວ ແຕ່ບໍ່ແມ່ນບໍ່ເຄີຍເກີດ ຈິດທີ່ເປັນອະນາຄົດບໍ່ແມ່ນເກີດແລ້ວກໍແມ່ນ ບໍ່ເຄີຍເກີດກໍແມ່ນ

ປະຕິ. ຈິດໃດບໍ່ເຄີຍເກີດ ຈິດນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ຈິດທີ່ເປັນປັດຈຸບັນ ບໍ່ເຄີຍເກີດ ແຕ່ບໍ່ແມ່ນບໍ່ເກີດແລ້ວ ຈິດທີ່ເປັນອະນາຄົດ ບໍ່ເຄີຍເກີດກໍແມ່ນ ບໍ່ແມ່ນເກີດແລ້ວກໍແມ່ນ

[໑໐໐] ອະນຸ. ຈິດໃດເກີດແລ້ວ ຈິດນັ້ນກໍຈັກເກີດແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດຈັກເກີດ ຈິດນັ້ນກໍເກີດແລ້ວແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດບໍ່ແມ່ນເກີດແລ້ວ ຈິດນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ຈິດທີ່ເປັນອະນາຄົດບໍ່ແມ່ນເກີດແລ້ວ ແຕ່ບໍ່ແມ່ນຈັກບໍ່ເກີດ ຈິດທີ່ເປັນອະດີດບໍ່ແມ່ນເກີດແລ້ວກໍແມ່ນ ບໍ່ແມ່ນຈັກເກີດກໍແມ່ນ

ປະຕິ. ຈິດໃດບໍ່ແມ່ນຈັກເກີດ ຈິດນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ຈິດທີ່ເປັນປັດຈຸບັນບໍ່ແມ່ນຈັກເກີດ ແຕ່ບໍ່ແມ່ນບໍ່ເກີດແລ້ວ ຈິດທີ່ເປັນອະດີດບໍ່ແມ່ນຈັກເກີດກໍແມ່ນ ບໍ່ແມ່ນເກີດແລ້ວກໍແມ່ນ

## ໑໑. ອະຕີຕານາຄະຕະວານ

[໑໐໑] ອະນຸ. ຈິດໃດເຄີຍເກີດ ຈິດນັ້ນບໍ່ແມ່ນເກີດແລ້ວ ຈິດນັ້ນກໍຈັກເກີດແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດຈັກເກີດ ຈິດນັ້ນບໍ່ແມ່ນເກີດແລ້ວ ຈິດນັ້ນກໍເຄີຍເກີດແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດບໍ່ເຄີຍເກີດ ຈິດນັ້ນບໍ່ແມ່ນບໍ່ເກີດແລ້ວ ຈິດນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດໃດບໍ່ແມ່ນຈັກເກີດ ຈິດນັ້ນບໍ່ແມ່ນບໍ່ເກີດແລ້ວ ຈິດນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ແມ່ນ

## ໑໔. ອຸບປັນນຸບປັດຊະມານະວານ

[໑໐໔] ອະນຸ. ຈິດທີ່ເກີດແລ້ວ ກໍຊື່ວ່າເກີດຢູ່ແມ່ນບໍ?

ວິ. ໃນພັງຄະຂະນະ ຈິດເກີດແລ້ວ ແຕ່ບໍ່ແມ່ນເກີດຢູ່ ໃນອຸບປາທະຂະນະ ຈິດເກີດແລ້ວກໍແມ່ນ ເກີດຢູ່ກໍແມ່ນ

ປະຕິ. ຈິດທີ່ເກີດຢູ່ ກໍຊື່ວ່າເກີດແລ້ວແມ່ນບໍ?

ວິ. ແມ່ນ

ອະນຸ. ຈິດທີ່ບໍ່ແມ່ນເກີດແລ້ວ ກໍຊື່ວ່າບໍ່ແມ່ນເກີດຢູ່ແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດທີ່ບໍ່ແມ່ນເກີດຢູ່ ກໍຊື່ວ່າບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ໃນພັງຄະຂະນະ ຈິດບໍ່ແມ່ນເກີດຢູ່ ແຕ່ບໍ່ແມ່ນບໍ່ເກີດແລ້ວ ຈິດທີ່ເປັນອະດີດແລະທີ່ເປັນອະນາຄົດ ບໍ່ແມ່ນເກີດຢູ່ກໍແມ່ນ ບໍ່ແມ່ນເກີດແລ້ວກໍແມ່ນ

## ໑໕. ນິຣຸດທະນິຣຸດຊະມານະວານ

[໑໐໕] ອະນຸ. ຈິດທີ່ດັບແລ້ວ ກໍຊື່ວ່າດັບຢູ່ແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດທີ່ດັບຢູ່ ກໍຊື່ວ່າດັບແລ້ວແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດທີ່ບໍ່ແມ່ນດັບແລ້ວ ກໍຊື່ວ່າບໍ່ແມ່ນດັບຢູ່ແມ່ນບໍ?

ວິ. ໃນພັງຄະຂະນະ ຈິດບໍ່ແມ່ນດັບແລ້ວ ແຕ່ບໍ່ແມ່ນບໍ່ດັບຢູ່ ໃນອຸບປາທະຂະນະຈິດທີ່ເປັນອະນາຄົດບໍ່ແມ່ນດັບແລ້ວກໍແມ່ນ ບໍ່ແມ່ນດັບຢູ່ກໍແມ່ນ

ປະຕິ. ຈິດທີ່ບໍ່ແມ່ນດັບຢູ່ ກໍຊື່ວ່າບໍ່ແມ່ນດັບແລ້ວແມ່ນບໍ?

ວິ. ຈິດທີ່ເປັນອະດີດບໍ່ແມ່ນດັບຢູ່ ແຕ່ບໍ່ແມ່ນບໍ່ດັບແລ້ວ ໃນອຸບປາທະຂະນະຈິດທີ່ເປັນອະນາຄົດບໍ່ແມ່ນດັບຢູ່ກໍແມ່ນ ບໍ່ແມ່ນດັບແລ້ວກໍແມ່ນ

## ໑໘. ອະຕິກກັນຕະກາລະວານ

[໑໐໘] ອະນຸ. ຈິດໃດລ່ວງໄປທຸກ ໆ ຂະນະທີ່ເກີດຢູ່ ກໍຊື່ວ່າລ່ວງການແລ້ວ ຈິດນັ້ນລ່ວງໄປທຸກ ໆ ຂະນະທີ່ດັບຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ວິ. ໃນພັງຄະຂະນະ ຈິດລ່ວງອຸບປາທະຂະນະ ແຕ່ບໍ່ລ່ວງພັງຄະຂະນະ ຈິດທີ່ເປັນອະດີດລ່ວງອຸບປາທະຂະນະກໍແມ່ນ ລ່ວງພັງຄະຂະນະກໍແມ່ນ

ປະຕິ. ຈິດໃດລ່ວງໄປທຸກ ໆ ຂະນະທີ່ດັບຢູ່ ກໍຊື່ວ່າລ່ວງການແລ້ວ ຈິດນັ້ນລ່ວງໄປທຸກ ໆ ຂະນະທີ່ເກີດຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ວິ. ຈິດທີ່ເປັນອະດີດ ຯລຯ

ອະນຸ. ຈິດໃດລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນເກີດຢູ່ ກໍຊື່ວ່າລ່ວງການແລ້ວ ຈິດນັ້ນລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນດັບຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ວິ. ໃນອຸບປາທະຂະນະ ຈິດທີ່ເປັນອະນາຄົດ ຯລຯ.

ປະຕິ. ຈິດໃດລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນດັບຢູ່ ກໍຊື່ວ່າລ່ວງການແລ້ວ ຈິດນັ້ນລ່ວງໄປທຸກ ໆ ຂະນະທີ່ບໍ່ແມ່ນເກີດຢູ່ ກໍຊື່ວ່າລ່ວງການແລ້ວແມ່ນບໍ?

ວິ. ໃນພັງຄະຂະນະ ຈິດບໍ່ລ່ວງພັງຄະຂະນະ ແຕ່ບໍ່ແມ່ນບໍ່ລ່ວງອຸບປາທະຂະນະໃນອຸບປາທະຂະນະຈິດທີ່ເປັນອະນາຄົດບໍ່ລ່ວງພັງຄະຂະນະກໍແມ່ນ ບໍ່ລ່ວງອຸບປາທະຂະນະກໍແມ່ນ

**ນິດເທດແຫ່ງທຳມະວານ ຈົບ**

# ໑. ສຸດທະຈິດຕະສາມັນຍະ

## ໓. ປຸກຄະລະທຳມະວານ

### ໑. ອຸບປາທະນິໂຣທະກາລະສຳເພທະວານ

[໑໐໕] ອະນຸ. ຈິດໃດຂອງບຸກຄົນໃດກຳລັງເກີດ ບໍ່ແມ່ນກຳລັງດັບ ຈິດນັ້ນຂອງບຸກຄົນນັ້ນກໍຈັກດັບ ບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດໃດຂອງບຸກຄົນໃດຈັກດັບ ບໍ່ແມ່ນຈັກເກີດ ຈິດນັ້ນຂອງບຸກຄົນນັ້ນກໍກຳລັງເກີດ ບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ແມ່ນ

ອະນຸ. ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ແຕ່ກຳລັງດັບ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນຈັກດັບ ແຕ່ຈັກເກີດແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດຂອງບຸກຄົນໃດບໍ່ແມ່ນຈັກດັບ ແຕ່ຈັກເກີດ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດ ແຕ່ກຳລັງດັບມີບໍ?

ວິ. ບໍ່ມີ

### ໔. ອຸບປາທຸບປັນນະວານ

[໑໐໖] ອະນຸ. ຈິດໃດຂອງບຸກຄົນໃດກຳລັງເກີດ ຈິດນັ້ນຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດໃດຂອງບຸກຄົນໃດເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ໃນພັງຄະຂະນະຈິດເກີດແລ້ວ ແຕ່ບໍ່ແມ່ນກຳລັງເກີດໃນອຸບປາທະຂະນະຈິດເກີດແລ້ວກໍແມ່ນ ກຳລັງເກີດກໍແມ່ນ

ອະນຸ. ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ໃນພັງຄະຂະນະຈິດບໍ່ແມ່ນກຳລັງເກີດ ແຕ່ບໍ່ແມ່ນບໍ່ເກີດແລ້ວ ຈິດທີ່ເປັນອະດີດແລະທີ່ເປັນອະນາຄົດ ບໍ່ແມ່ນກຳລັງເກີດກໍແມ່ນ ບໍ່ແມ່ນເກີດແລ້ວກໍແມ່ນ

ປະຕິ. ຈິດໃດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ແມ່ນ

## ໓. ນິໂຣທຸບປັນນະວານ

[໑໐໗] ອະນຸ. ຈິດໃດຂອງບຸກຄົນໃດກຳລັງດັບ ຈິດນັ້ນຂອງບຸກຄົນນັ້ນກໍເກີດແລ້ວແມ່ນບໍ?

ວິ. ແມ່ນ

ປະຕິ. ຈິດໃດຂອງບຸກຄົນໃດເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ?

ວິ. ໃນອຸບປາທະຂະນະຈິດເກີດແລ້ວ ແຕ່ບໍ່ແມ່ນກຳລັງດັບໃນພັງຄະຂະນະຈິດເກີດແລ້ວກໍແມ່ນ ກຳລັງດັບກໍແມ່ນ

ອະນຸ. ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນເກີດແລ້ວແມ່ນບໍ?

ວິ. ໃນອຸບປາທະຂະນະຈິດບໍ່ແມ່ນກຳລັງດັບ ແຕ່ບໍ່ແມ່ນບໍ່ເກີດແລ້ວ ຈິດທີ່ເປັນອະດີດແລະທີ່ເປັນອະນາຄົດ ບໍ່ແມ່ນກຳລັງດັບກໍແມ່ນ ບໍ່ແມ່ນເກີດແລ້ວກໍແມ່ນ

ປະຕິ. ຈິດໃດຂອງບຸກຄົນໃດບໍ່ແມ່ນເກີດແລ້ວ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ແມ່ນ

## ໔. ອຸບປາທະວານ

[໑໐໘] ອະນຸ. ຈິດໃດຂອງບຸກຄົນໃດກຳລັງເກີດ ຈິດນັ້ນຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດຂອງບຸກຄົນໃດເຄີຍເກີດ ຈິດນັ້ນຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງເກີດຈິດນັ້ນຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ຈິດທີ່ເປັນອະດີດບໍ່ແມ່ນກຳລັງເກີດ ແຕ່ບໍ່ແມ່ນບໍ່ເຄີຍເກີດໃນພັງຄະຂະນະຈິດທີ່ເປັນອະນາຄົດບໍ່ແມ່ນກຳລັງເກີດກໍແມ່ນ ບໍ່ເຄີຍເກີດກໍແມ່ນ

ປະຕິ. ຈິດໃດຂອງບຸກຄົນໃດບໍ່ເຄີຍເກີດຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ໃນອຸບປາທະຂະນະຈິດບໍ່ເຄີຍເກີດ ແຕ່ບໍ່ແມ່ນບໍ່ກຳລັງເກີດ ໃນພັງຄະຂະນະຈິດທີ່ເປັນອະນາຄົດບໍ່ເຄີຍເກີດກໍແມ່ນ ບໍ່ແມ່ນກຳລັງເກີດກໍແມ່ນ

[໑໐໙] ອະນຸ. ຈິດໃດຂອງບຸກຄົນໃດກຳລັງເກີດຈິດນັ້ນຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດຂອງບຸກຄົນໃດຈັກເກີດ ຈິດນັ້ນຂອງບຸກຄົນນັ້ນກໍກຳລັງເກີດແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງເກີດ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ຈິດທີ່ເປັນອະນາຄົດບໍ່ແມ່ນກຳລັງເກີດ ແຕ່ບໍ່ແມ່ນຈັກບໍ່ເກີດໃນພັງຄະຂະນະຈິດທີ່ເປັນອະດີດບໍ່ແມ່ນກຳລັງເກີດກໍແມ່ນ ບໍ່ແມ່ນຈັກເກີດກໍແມ່ນ

ປະຕິ. ຈິດໃດຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງເກີດແມ່ນບໍ?

ວິ. ໃນອຸບປາທະຂະນະຈິດບໍ່ແມ່ນຈັກເກີດ ແຕ່ບໍ່ແມ່ນບໍ່ກຳລັງເກີດໃນພັງຄະຂະນະຈິດທີ່ເປັນອະດີດບໍ່ແມ່ນຈັກເກີດກໍແມ່ນ ບໍ່ແມ່ນກຳລັງເກີດກໍແມ່ນ

[໑໑໐] ອະນຸ. ຈິດໃດຂອງບຸກຄົນໃດເຄີຍເກີດ ຈິດນັ້ນຂອງບຸກຄົນນັ້ນກໍຈັກເກີດແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດຂອງບຸກຄົນໃດຈັກເກີດ ຈິດນັ້ນຂອງບຸກຄົນນັ້ນກໍເຄີຍເກີດແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດຂອງບຸກຄົນໃດບໍ່ເຄີຍເກີດ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ຈິດທີ່ເປັນອະນາຄົດບໍ່ເຄີຍເກີດ ແຕ່ບໍ່ແມ່ນຈັກບໍ່ເກີດ ຈິດທີ່ເປັນປັດຈຸບັນ ບໍ່ເຄີຍເກີດກໍແມ່ນ ບໍ່ແມ່ນຈັກເກີດກໍແມ່ນ

ປະຕິ. ຈິດໃດຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ເຄີຍເກີດແມ່ນບໍ?

ວິ. ຈິດທີ່ເປັນອະດີດບໍ່ແມ່ນຈັກເກີດ ແຕ່ບໍ່ແມ່ນບໍ່ເຄີຍເກີດ ຈິດທີ່ເປັນປັດຈຸບັນ ບໍ່ແມ່ນຈັກເກີດກໍແມ່ນ ບໍ່ເຄີຍເກີດກໍແມ່ນ

## ໕. ນິໂຣທະວານ

[໑໑໑] ອະນຸ. ຈິດໃດຂອງບຸກຄົນໃດກຳລັງດັບ ຈິດນັ້ນຂອງບຸກຄົນນັ້ນກໍເຄີຍດັບແມ່ນບໍ?

ວິ. ບໍ່ແມ່ນ

ປະຕິ. ຈິດໃດຂອງບຸກຄົນໃດເຄີຍດັບ ຈິດນັ້ນຂອງບຸກຄົນນັ້ນກໍກຳລັງດັບແມ່ນບໍ?

ວິ. ບໍ່ແມ່ນ

ອະນຸ. ຈິດໃດຂອງບຸກຄົນໃດບໍ່ແມ່ນກຳລັງດັບ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ເຄີຍດັບແມ່ນບໍ?

ວິ. ຈິດທີ່ເປັນອະດີດບໍ່ແມ່ນກຳລັງດັບ ແຕ່ບໍ່ແມ່ນບໍ່ເຄີຍດັບ ໃນອຸບປາທະຂະນະຈິດທີ່ເປັນອະນາຄົດບໍ່ແມ່ນກຳລັງດັບກໍແມ່ນ ບໍ່ເຄີຍດັບກໍແມ່ນ

ປະຕິ. ຈິດໃດຂອງບຸກຄົນໃດບໍ່ເຄີຍດັບ ຈິດນັ້ນຂອງບຸກຄົນນັ້ນກໍບໍ່ແມ່ນກຳລັງດັບແມ່ນບໍ?

ວິ. ໃນພັງຄະຂະນະຈິດບໍ່ເຄີຍດັບ ແຕ່ບໍ່ແມ່ນບໍ່ກຳລັງດັບ ໃນອຸບປາທະຂະນະຈິດທີ່ເປັນອະນາຄົດບໍ່ເຄີຍດັບກໍແມ່ນ ບໍ່ແມ່ນກຳລັງດັບກໍແມ່ນ

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ມະນິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ຄານິນຊີບໍ່ແມ່ນຈັກເກີດ ບຸກຄົນຜູ້ອຸບັດຢູ່ໃນກາມາວະຈອນພູມ ມະນິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະຄານິນຊີກໍຈັກເກີດ

**ຄານິນທະຣິຍະມູລະກະໄນ ຈົບ**

## ອິດຖິນທະຣິຍະມູລະກະໄນ

[໓໐໑] ອະນຸ. ອິດຖິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ປຸຣິສິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະປຸຣິສິນຊີກໍຈັກເກີດ

ປະຕິ. ປຸຣິສິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ອິດຖິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ອິດຖິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະອິດຖິນຊີກໍຈັກເກີດ

ອະນຸ. ອິດຖິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຊີວິຕິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ອິດຖິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ອະຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ຊີວິຕິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ອິດຖິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ຊີວິຕິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະອິດຖິນຊີກໍຈັກເກີດ

ອະນຸ. ອິດຖິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ໂສມະນັດສິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະໂສມະນັດສິນຊີກໍຈັກເກີດ

ປະຕິ. ໂສມະນັດສິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ອິດຖິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ອິດຖິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະອິດຖິນຊີກໍຈັກເກີດ

ອະນຸ. ອິດຖິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ອຸເປກຂິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະອຸເປກຂິນຊີກໍຈັກເກີດ

ປະຕິ. ອຸເປກຂິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ອິດຖິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ອະຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ອິດຖິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະອິດຖິນຊີກໍຈັກເກີດ

ອະນຸ. ອິດຖິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ສັດທິນຊີ ຯລຯ ປັນຍິນຊີ ຯລຯ ມະນິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ອິດຖິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມ ອະຮູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ມະນິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ອິດຖິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ ໃນກາມາວະຈອນພູມ ມະນິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະອິດຖິນຊີກໍຈັກເກີດ

### ອິດຖິນທະຣິຍະມູລະກະໄນ ຈົບ

## ປຸຣິສິນທະຣິຍະມູລະກະໄນ

[໓໐໔] ອະນຸ. ປຸຣິສິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຊີວິຕິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມ ອະຮູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ຊີວິຕິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ປຸຣິສິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ຊີວິຕິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະປຸຣິສິນຊີກໍຈັກເກີດ

ອະນຸ. ປຸຣິສິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ໂສມະນັດສິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະໂສມະນັດສິນຊີກໍຈັກເກີດ

ປະຕິ. ໂສມະນັດສິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ປຸຣິສິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະປຸຣິສິນຊີກໍຈັກເກີດ

ອະນຸ. ປຸຣິສິນຊີຂອງບຸກຄົນໃນພູມໃດຈັກເກີດ ອຸເປກຂິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະອຸເປກຂິນຊີກໍຈັກເກີດ

ປະຕິ. ອຸເປກຂິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ອະຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີອິດຖີເກີດ ໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ປຸຣິສິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະປຸຣິສິນຊີກໍຈັກເກີດ

ອະນຸ. ປຸຣິສິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ສັດທິນຊີ ۶ລ۶ ປັນຍິນຊີ۶ລ۶ ມະນິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ອະຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີອິດຖີ ເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ມະນິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ປຸຣິສິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນກາມາວະຈອນພູມ ມະນິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະປຸຣິສິນຊີກໍຈັກເກີດ

**ປຸຣິສິນທະຣິຍະມູລະກະໄນ ຈົບ**

## ຊີວິຕິນທະຣິຍະມູລະກະໄນ

[໓໐໓] ອະນຸ. ຊີວິຕິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມຈິດທີ່ສຳປະຍຸດດ້ວຍອຸເປກຂາຈັກເກີດໃນລຳດັບແຫ່ງຈິດໃດ (ໃນລຳດັບແຫ່ງຈິດນັ້ນ) ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຊີວິຕິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ

ແຕ່ໂສມະນັດສິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດໃນຈະຕຸໂວການະພູມແລະປັນຈະໂວກາ ຣະພູມ ຊີວິຕິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະໂສມະນັດສິນຊີກໍຈັກເກີດ

ປະຕິ. ໂສມະນັດສິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນໃນພູມ ນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຊີວິຕິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ອຸເປກຂິນຊີຂອງບຸກຄົນນັ້ນໃນພູມນັ້ນ ກໍຈັກເກີດແມ່ນບໍ?

ວິ. ປັດສິມຈິດທີ່ສຳປະຍຸດດ້ວຍໂສມະນັດຈັກເກີດໃນລຳດັບແຫ່ງຈິດໃດ ໃນລຳດັບແຫ່ງ ຈິດນັ້ນ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຊີວິຕິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນຈະຕຸໂວການະພູມແລະປັນຈະໂວການະ ພູມ ຊີວິຕິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະອຸເປກຂິນຊີກໍຈັກເກີດ

ປະຕິ. ອຸເປກຂິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນໃນພູມນັ້ນ ກໍຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຊີວິຕິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ສັດທິນຊີ ຯລຯ ປັນຍິນຊີ ຯລຯ ມະ ນິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຊີວິຕິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກ ເກີດແຕ່ມະນິນຊີບໍ່ແມ່ນຈັກເກີດ ບຸກຄົນຜູ້ອຸບັດຢູ່ໃນຈະຕຸໂວການະພູມແລະປັນຈະໂວການະພູມ ຊີວິຕິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແລະມະນິນຊີກໍຈັກເກີດ

ປະຕິ. ມະນິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນໃນພູມນັ້ນກໍ ຈັກເກີດແມ່ນບໍ?

ວິ. ແມ່ນ

**ຊີວິຕິນທະຣິຍະມູລະກະໄນ ຈົບ**

## ໂສມະນັດສິນທະຣິຍະມູລະກະໄນ

[໓໐໔] ອະນຸ. ໂສມະນັດສິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ອຸເປກຂິນຊີຂອງບຸກຄົນ ນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມຈິດທີ່ສຳປະຍຸດດ້ວຍໂສມະນັດຈັກເກີດໃນລຳດັບແຫ່ງຈິດໃດ ໃນລຳດັບແຫ່ງ ຈິດນັ້ນ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກເກີດ

ບຸກຄົນນອກນີ້ຜູ້ອຸບັດຢູ່ໃນຈະຕຸໂວການະພູມແລະປັນຈະໂວການະພູມ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະອຸເປກຂິນຊີກໍຈັກເກີດ

ປະຕິ. ອຸເປກຂິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມຈິດທີ່ສຳປະຍຸດດ້ວຍອຸເປກຂາຈັກເກີດໃນລຳດັບແຫ່ງຈິດໃດ (ໃນລຳດັບແຫ່ງຈິດນັ້ນ) ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ໂສມະນັດສິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນຈະຕຸໂວການະພູມແລະປັນຈະໂວການະພູມ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະໂສມະນັດສິນຊີກໍຈັກເກີດ

ອະນຸ. ໂສມະນັດສິນຊີຂອງບຸກຄົນໃດໃນພູມໃດຈັກເກີດສັດທິນຊີ ຯລຯ ປັນຍິນຊີ ຯລຯ ມະນິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ປັດສິມຈິດທີ່ສຳປະຍຸດດ້ວຍອຸເປກຂາຈັກເກີດໃນລຳດັບແຫ່ງຈິດໃດ (ໃນລຳດັບແຫ່ງຈິດນັ້ນ) ມະນິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ໂສມະນັດສິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນຈະຕຸໂວການະພູມແລະປັນຈະໂວການະພູມ ມະນິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະໂສມະນັດສິນຊີກໍຈັກເກີດ

**ໂສມະນັດສິນທະຣິຍະມູລະກະໄນ ຈົບ**

## ອຸເປກຂິນທະຣິຍະມູລະກະໄນ

[໓໐໕] ອະນຸ. ອຸເປກຂິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ສັດທິນຊີ ຯລຯ ປັນຍິນຊີ ຯລຯ ມະນິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ອຸເປກຂິນຊີຂອງບຸກຄົນນັ້ນໃນພູມນັ້ນຈັກເກີດແມ່ນບໍ?

ວິ. ປັດສິມຈິດທີ່ສຳປະຍຸດດ້ວຍໂສມະນັດຈັກເກີດໃນລຳດັບແຫ່ງຈິດໃດ (ໃນລຳດັບແຫ່ງຈິດນັ້ນ) ມະນິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກເກີດ ບຸກຄົນນອກນີ້ຜູ້ອຸບັດຢູ່ໃນຈະຕຸໂວການະພູມແລະປັນຈະໂວການະພູມ ມະນິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນຈັກເກີດແລະອຸເປກຂິນຊີກໍຈັກເກີດ

**ອຸເປກຂິນທະຣິຍະມູລະກະໄນ ຈົບ**

## ສັດທິນທະຣິຍະມູລະກະໄນ

[໓໐໖] ອະນຸ. ສັດທິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ປັນຍິນຊີ ຯລຯ ມະນິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ສັດທິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

**ສັດທິນທະຣິຍະມູລະກະໄນ ຈົບ**

## ປັນຍິນທະຣິຍະມູລະກະໄນ

[໓໐໗] ອະນຸ. ປັນຍິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ມະນິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນິນຊີຂອງບຸກຄົນໃດໃນພູມໃດຈັກເກີດ ປັນຍິນຊີຂອງບຸກຄົນນັ້ນໃນພູມນັ້ນກໍຈັກເກີດແມ່ນບໍ?

ວິ. ແມ່ນ

**ປັນຍິນທະຣິຍະມູລະກະໄນ ຈົບ**

## ປັດຈະນີກະບຸກຄົນ

## ຈັກຂຸນທະຣິຍະມູລະກະໄນ

[໓໐໘] ອະນຸ. ຈັກຂຸນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ໂສຕິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂຸນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຄານິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຄານົນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດ ແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຮູບປາວະຈອນພູມແລ້ວປະຣິນິບພານ ຄານົນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂຸນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານ ຄານົນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຈັກຂຸນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂຸນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອິດຖິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດ ແມ່ນບໍ?

ວິ. ແມ່ນ

ປະຕິ. ອິດຖິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດ ແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຮູບປາວະຈອນພູມແລ້ວປະຣິນິບພານ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຈັກຂຸນຊີກໍບໍ່ແມ່ນຈັກເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຈັກຂຸນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂຸນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດ ແມ່ນບໍ?

ວິ. ແມ່ນ

ປະຕິ. ປຸຣິສິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດ ແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຮູບປາວະຈອນພູມແລ້ວປະຣິນິບພານ ແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂຸນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດຈັກອຸບັດໃນຮູບປາວະຈອນພູມແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຈັກຂຸນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂຸນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດ ແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານ ຈັກຂຸນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຊີວິຕິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ຈັກຂຸນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຊີວິຕິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ຊີວິຕິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂຸນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສມະນັດສິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີຈັກຂຸເກີດໄດ້ແລະມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂຸນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຈັກຂຸນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂຸນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອຸເປກຂິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານ ຈັກຂຸນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ຈັກຂຸນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະອຸເປກຂິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ອຸເປກຂິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີຈັກຂຸເກີດໄດ້ແລະມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂຸນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຈັກຂຸນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂຸນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ສັດທິນຊີ ໗ລ໗ ປັນຍິນຊີ ໗ລ໗ ມະນິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານ ຈັກຂຸນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ມະນິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ຈັກຂຸນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະມະນິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ມະນິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ຈັກຂຸນທະຣິຍະມູລະກະໄນ ຈົບ**

## ຄານິນທະຣິຍະມູລະກະໄນ

[໓໐໙] ອະນຸ. ຄານິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອິດຖີນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ອິດຖີນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຄານິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ອິດຖີນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຄານິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ອະຣູບປາວະຈອນພູມແລ້ວປະຣິນິບພານ ອິດຖີນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຄານິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຄານິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ປຸຣິສິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຄານິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຄານິນທະຣິຍະບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ອະຣູບປາວະຈອນພູມແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຄານິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຄານິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມແລ້ວປະຣິນິບພານ ຄານິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຊີວິຕິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ຄານິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະຊີວິຕິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ຊີວິຕິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຄານິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມແລ້ວປະຣິນິບພານ ຄານິນຊີຂອງບຸກາ

ຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ໂສມະນັດສິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານ ຄານິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະໂສມະນັດສິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ໂສມະນັດສິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຄານິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີຄານະເກີດໄດ້ມີອຸເປກຂາຈັກອຸບັດແລ້ວປະຣິນິບພານ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຄານິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມແລ້ວປະຣິນິບພານ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຄານິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຄານິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອຸເປກຂິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມແລ້ວປະຣິນິບພານ ຄານິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກບໍ່ເກີດປັດສິມພະວິກະບຸກຄົນ ແລະບຸກຄົນເຫຼົ່າໃດມີຈິດເປັນໂສມະນັດຈັກອຸບັດໃນຣູບປາວະຈອນພູມແລ້ວປະຣິນິບພານ ຄານິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະອຸເປກຂິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ອຸເປກຂິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຄານິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີຄານະເກີດໄດ້ ແລະມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຄານິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ແລະບຸກຄົນເຫຼົ່າໃດມີຈິດເປັນໂສມະນັດຈັກອຸບັດໃນຣູບປາວະຈອນພູມແລ້ວປະຣິນິບພານ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຄານິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຄານິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ສັດທິນຊີ ຯລຯ ປັນຍິນຊີ ຯລຯ ມະນິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມແລ້ວປະຣິນິບພານ ຄານິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ມະນິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ຄານິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະມະນິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ມະນິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຄານິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ຄານິນທະຣິຍະມູລະກະໄນ ຈົບ**

# ອິດຖີນທະຣິຍະມູລະກະໄນ

[໓໑໐] ອະນຸ. ອິດຖີນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ອິດຖີນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ປຸຣິສິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດຈັກອຸບັດໃນຮູບປາວະຈອນພູມ ອະຮູບປາວະຈອນພູມແລ້ວປະຣິນິບພານ ອິດຖີນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະປຸຣິສິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ປຸຣິສິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອິດຖີນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ອິດຖີນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດຈັກອຸບັດໃນຮູບປາວະຈອນພູມ ອະຮູບປາວະຈອນພູມແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະອິດຖີນຊີກໍບໍ່ແມ່ນຈັກເກີດ

ອະນຸ. ອິດຖີນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອິດຖີນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຮູບປາວະຈອນພູມ ອະຮູບປາວະຈອນພູມແລ້ວປະຣິນິບພານແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ອິດຖີນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຊີວິຕິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ອິດຖີນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະຊີວິຕິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ຊີວິຕິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອິດຖີນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ອິດຖີນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຮູບປາວະຈອນພູມແລ້ວປະຣິນິບພານ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອິດຖີນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ໂສມະນັດສິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວຈັກປະຣິນິບພານ ບຸກາ

ຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໃນພາວະນັ້ນ ໆ ມີຈິດເປັນອຸເປກຂາ ຈັກອຸບັດແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະໂສມະນັດສິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ໂສມະນັດສິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອິດຖິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ອິດຖິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ບຸກຄົນເຫຼົ່າໃດຈັກອຸບັດໃນ ອະຣູບປະພູມແລ້ວປະຣິນິບພານ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ໂສມະນັດສິນຊີບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະອິດຖິນຊີກໍຈັກບໍ່ເກີດ

ອະນຸ. ອິດຖິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອຸເປກຂິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ອະຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໃນພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະອຸເປກຂິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ອຸເປກຂິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອິດຖິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ອິດຖິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະອິດຖິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ອິດຖິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ສັດທິນຊີ ໗ລ໗ ປັນຍິນຊີ ໗ລ໗ ມະນິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ແລະອະຣູບປາວະຈອນພູມແລ້ວປະຣິ

ນິບພານແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ມະນິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະມະນິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ມະນິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອິດຖິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ອິດຖິນທະຣິຍະມູລະກະໄນ ຈົບ**

## ປຸຣິສິນທະຣິຍະມູລະກະໄນ

[៣១១] ອະນຸ. ປຸຣິສິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຮູບປາວະຈອນພູມ ແລະອະຮູບປາວະຈອນພູມແລ້ວປະຣິນິບພານແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຊີວິຕິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຊີວິຕິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ຊີວິຕິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ປຸຣິສິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຮູບປາວະຈອນພູມແລ້ວ ປະຣິນິບພານແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ໂສມະນັດສິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ບຸກຄົນເຫຼົ່າໃດຈັກອຸບັດໃນອະຮູບປະພູມແລ້ວປະຣິນິບພານ ແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະໂສມະນັດສິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ໂສມະນັດສິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນ

ອຸເປກຂາຈັກອຸບັດແລ້ວປະຣິນິບພານ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ປຸຣິສິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ບຸກຄົນເຫຼົ່າໃດຈັກອຸບັດໃນອະຣູບປະພູມ ແລ້ວປະຣິນິບພານ ແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະປຸຣິສິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ປຸຣິສິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອຸເປກຂິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ອະຣູບປາວະຈອນພູມແລ້ວປະຣິນິບພານແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາ ຈັກອຸບັດແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະອຸເປກຂິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ອຸເປກຂິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ປຸຣິສິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານອຸເປກຂິນຊີ ຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະປຸຣິສິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ປຸຣິສິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ສັດທິນຊີ ຯລຯ ປັນຍິນຊີ ຯລຯ ມະນິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດຈັກອຸບັດໃນຣູບປາວະຈອນພູມ ອະຣູບປາວະຈອນພູມແລ້ວປະຣິນິບພານແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ມະນິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແລະມະນິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ມະນິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ປຸຣິສິນທະຣິຍະມູລະກະໄນ ຈົບ**

## ຊີວິຕິນທະຣິຍະມູລະກະໄນ

[໓໑໘] ອະນຸ. ຊີວິຕິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສມະນັດສິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ປັດສິມຈິດທີ່ສຳປະຍຸດດ້ວຍອຸເປກຂາຈັກເກີດໃນລຳດັບແຫ່ງຈິດໃດ (ໃນລຳດັບແຫ່ງຈິດນັ້ນ) ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຊີວິຕິນຊີບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ພ້ອມພຽງດ້ວຍປັດສິມຈິດ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຊີວິຕິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຊີວິຕິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອຸເປກຂິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ອຸເປກຂິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ປັດສິມຈິດທີ່ສຳປະຍຸດດ້ວຍໂສມະນັດຈັກເກີດໃນລຳດັບແຫ່ງຈິດໃດ (ໃນລຳດັບແຫ່ງຈິດນັ້ນ) ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ຊີວິຕິນຊີບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ພ້ອມພຽງດ້ວຍປັດສິມຈິດ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະຊີວິຕິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຊີວິຕິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ສັດທິນຊີ ຯລຯ ປັນຍິນຊີ ຯລຯ ມະນິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

### ຊີວິຕິນທະຣິຍະມູລະກະໄນ ຈົບ

## ໂສມະນັດສິນທະຣິຍະມູລະກະໄນ

[໓໑໙] ອະນຸ. ໂສມະນັດສິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອຸເປກຂິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ປັດສິມຈິດທີ່ສໍາປະຍຸດດ້ວຍອຸເປກຂາຈັກເກີດໃນລໍາດັບແຫ່ງຈິດໃດ (ໃນລໍາດັບແຫ່ງຈິດນັ້ນ) ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ພ້ອມພຽງດ້ວຍປັດສິມຈິດ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະອຸເປກຂິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ອຸເປກຂິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ປັດສິມຈິດທີ່ສໍາປະຍຸດດ້ວຍໂສມະນັດຈັກເກີດໃນລໍາດັບແຫ່ງຈິດໃດ (ໃນລໍາດັບແຫ່ງຈິດນັ້ນ) ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ໂສມະນັດສິນຊີບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ພ້ອມພຽງດ້ວຍປັດສິມຈິດ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະໂສມະນັດສິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ໂສມະນັດສິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ສັດທິນຊີ ฯລฯ ປັນຍິນຊີ ฯລฯ ມະນິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ປັດສິມຈິດທີ່ສໍາປະຍຸດດ້ວຍອຸເປກຂາຈັກເກີດໃນລໍາດັບແຫ່ງຈິດໃດ (ໃນລໍາດັບແຫ່ງຈິດນັ້ນ) ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ມະນິນຊີບໍ່ແມ່ນຈັກບໍ່ເກີດບຸກຄົນຜູ້ພ້ອມພຽງດ້ວຍປັດສິມຈິດ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະມະນິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ມະນິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ໂສມະນັດສິນທະຣິຍະມູລະກະໄນ ຈົບ**

## ອຸເປກຂິນທະຣິຍະມູລະກະໄນ

[๓໑໔] ອະນຸ. ອຸເປກຂິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ສັດທິນຊີ ฯລฯ ປັນຍິນຊີ ฯລฯ ມະນິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ປັດສິມຈິດທີ່ສໍາປະຍຸດດ້ວຍໂສມະນັດຈັກເກີດໃນລໍາດັບແຫ່ງຈິດໃດ (ໃນລໍາດັບແຫ່ງຈິດນັ້ນ) ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດ ແຕ່ມະນິນຊີບໍ່ແມ່ນຈັກບໍ່ເກີດ ບຸກຄົນຜູ້ພ້ອມພຽງດ້ວຍປັດສິມຈິດ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນບໍ່ແມ່ນຈັກເກີດແລະມະນິນຊີ ກໍບໍ່ແມ່ນຈັກເກີດ

ປະຕິ. ມະນິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ອຸເປກຂິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ອຸເປກຂິນທະຣິຍະມູລະກະໄນ ຈົບ**

## ສັດທິນທະຣິຍະມູລະກະໄນ

[໓໑໕] ອະນຸ. ສັດທິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ປັນຍິນຊີ ໗ລ໗ ມະນິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ສັດທິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ສັດທິນທະຣິຍະມູລະກະໄນ ຈົບ**

## ປັນຍິນທະຣິຍະມູລະກະໄນ

[໓໑໖] ອະນຸ. ປັນຍິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ມະນິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນິນຊີຂອງບຸກຄົນໃດບໍ່ແມ່ນຈັກເກີດ ປັນຍິນຊີຂອງບຸກຄົນນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ປັນຍິນທະຣິຍະມູລະກະໄນ ຈົບ**

## ປັດຈະນິກະໂອກາສະ

## ຈັກຂຸນທະຣິຍະມູລະກະໄນ

[໓໑໗] ອະນຸ. ຈັກຂຸນຊີໃນພູມໃດບໍ່ແມ່ນຈັກເກີດ ໂສຕິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕິນຊີໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂຸນຊີໃນພູມໃດບໍ່ແມ່ນຈັກເກີດ ຄານິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຄານິນຊີໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ໃນຣູບປາວະຈອນພູມ ໃນພູມນັ້ນຄານິນຊີບໍ່ແມ່ນຈັກເກີດ ແຕ່ຈັກຂຸນຊີບໍ່ແມ່ນຈັກບໍ່ເກີດ ໃນອະສັນຍະສັດຕະພູມແລະອະຣູບປະພູມ ໃນພູມນັ້ນຄານິນຊີບໍ່ແມ່ນຈັກເກີດແລະຈັກຂຸນຊີກໍບໍ່ແມ່ນ ຈັກເກີດ

ອະນຸ. ຈັກຂຸນຊີໃນພູມໃດບໍ່ແມ່ນຈັກເກີດ ອິດຖິນຊີ ຯລຯ ປຸຣິສິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ປຸຣິສິນຊີໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ໃນຣູບປາວະຈອນພູມ ໃນພູມນັ້ນປຸຣິສິນຊີບໍ່ແມ່ນຈັກເກີດ ແຕ່ຈັກຂຸນຊີບໍ່ແມ່ນຈັກບໍ່ເກີດ ໃນອະສັນຍະສັດຕະພູມແລະອະຣູບປະພູມ ໃນພູມນັ້ນປຸຣິສິນຊີບໍ່ແມ່ນຈັກເກີດແລະຈັກຂຸນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂຸນຊີໃນພູມໃດບໍ່ແມ່ນຈັກເກີດ ຊີວິຕິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ຈັກເກີດ

ປະຕິ. ຊີວິຕິນຊີໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດມີບໍ?

ວິ. ບໍ່ມີ

ອະນຸ. ຈັກຂຸນຊີໃນພູມໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສມະນັດສິນຊີໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂຸນຊີໃນພູມໃດບໍ່ແມ່ນຈັກເກີດ ອຸເປກຂິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ໃນອະຣູບປະພູມ ໃນພູມນັ້ນຈັກຂຸນຊີບໍ່ແມ່ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກບໍ່ເກີດໃນອະສັນຍະສັດຕະພູມ ໃນພູມນັ້ນຈັກຂຸນຊີບໍ່ແມ່ນຈັກເກີດ ແລະອຸເປກຂິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ອຸເປກຂິນຊີໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂຸນຊີໃນພູມໃດບໍ່ແມ່ນຈັກເກີດ ສັດທິນຊີ ຯລຯ ປັນຍິນຊີ ຯລຯ ມະນິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ໃນອະຣູບປະພູມ ໃນພູມນັ້ນຈັກຂຸນຊີບໍ່ແມ່ນຈັກເກີດ ແຕ່ມະນິນຊີບໍ່ແມ່ນຈັກບໍ່ເກີດໃນອະສັນຍະສັດຕະພູມ ໃນພູມນັ້ນຈັກຂຸນຊີບໍ່ແມ່ນຈັກເກີດແລະມະນິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ມະນິນຊີໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ຈັກຂຸນທະຣິຍະມູລະກະໄນ ຈົບ**

## ຄານິນທະຣິຍະມູລະກະໄນ

[໓໑໘] ອະນຸ. ຄານິນຊີໃນພູມໃດບໍ່ແມ່ນຈັກເກີດ ອິດຖິນຊີ ຯລຯ ປຸຣິສິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ປຸຣິສິນຊີໃນພູມໃດບໍ່ແມ່ນຈັກເກີດ ຄານິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານິນຊີໃນພູມໃດບໍ່ແມ່ນຈັກເກີດ ຊີວິຕິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ຈັກເກີດ

ປະຕິ. ຊີວິຕິນຊີໃນພູມໃດບໍ່ແມ່ນຈັກເກີດ ຄານິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດມີບໍ?

ວິ. ບໍ່ມີ

ອະນຸ. ຄານິນຊີໃນພູມໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ໃນຣູບປາວະຈອນພູມ ໃນພູມນັ້ນຄານິນຊີບໍ່ແມ່ນຈັກເກີດ ແຕ່ໂສມະນັດສິນຊີບໍ່ແມ່ນຈັກບໍ່ເກີດ ໃນອະສັນຍະສັດຕະພູມແລະອະຣູບປະພູມ ໃນພູມນັ້ນຄານິນຊີບໍ່ແມ່ນຈັກເກີດແລະໂສມະນັດສິນຊີ ກໍບໍ່ແມ່ນຈັກເກີດ

ປະຕິ. ໂສມະນັດສິນຊີໃນພູມໃດບໍ່ແມ່ນຈັກເກີດ ຄານິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານິນຊີໃນພູມໃດບໍ່ແມ່ນຈັກເກີດ ອຸເປກຂິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ໃນພູມນັ້ນຄານິນຊີບໍ່ແມ່ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກບໍ່ເກີດ ໃນອະສັນຍະສັດຕະພູມ ໃນພູມນັ້ນຄານິນຊີບໍ່ແມ່ນຈັກເກີດ ແລະອຸເປກຂິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ອຸເປກຂິນຊີໃນພູມໃດບໍ່ແມ່ນຈັກເກີດ ຄານິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານິນຊີໃນພູມໃດບໍ່ແມ່ນຈັກເກີດ ສັດທິນຊີ ຯລຯ ປັນຍິນຊີ ຯລຯ ມະນິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ໃນພູມນັ້ນຄານິນຊີບໍ່ແມ່ນຈັກເກີດ

ແຕ່ມະນິນຊີບໍ່ແມ່ນຈັກບໍ່ເກີດ ໃນອະສັນຍະສັດຕະພູມ ໃນພູມນັ້ນຄານິນຊີບໍ່ແມ່ນຈັກເກີດແລະມະນິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ມະນິນຊີໃນພູມໃດບໍ່ແມ່ນຈັກເກີດ ຄານິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ຄານິນທະຣິຍະມູລະກະໄນ ຈົບ**

## ອິດຖິນທະຣິຍະມູລະກະໄນ

[๓๑๗] ອະນຸ. ອິດຖິນຊີໃນພູມໃດບໍ່ແມ່ນຈັກເກີດ ປຸຣິສິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ປຸຣິສິນຊີໃນພູມໃດບໍ່ແມ່ນຈັກເກີດ ອິດຖິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ຯລຯ

**ອິດຖິນທະຣິຍະມູລະກະໄນ ຈົບ**

## ປຸຣິສິນທະຣິຍະມູລະກະໄນ

[๓๘๐] ອະນຸ. ປຸຣິສິນຊີໃນພູມໃດບໍ່ແມ່ນຈັກເກີດ ຊີວິຕິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ຈັກເກີດ

ປະຕິ. ຊີວິຕິນຊີໃນພູມໃດບໍ່ແມ່ນຈັກເກີດ ປຸຣິສິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດມີບໍ?

ວິ. ບໍ່ມີ

ອະນຸ. ປຸຣິສິນຊີໃນພູມໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ໃນຣູບປາວະຈອນພູມ ໃນພູມນັ້ນປຸຣິສິນຊີບໍ່ແມ່ນຈັກເກີດ ແຕ່ໂສມະນັດສິນຊີບໍ່ແມ່ນຈັກບໍ່ເກີດ ໃນອະສັນຍະສັດຕະພູມແລະອະຣູບປະພູມ ໃນພູມນັ້ນປຸຣິສິນຊີບໍ່ແມ່ນຈັກເກີດແລະໂສມະນັດສິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ໂສມະນັດສິນຊີໃນພູມໃດບໍ່ແມ່ນຈັກເກີດ ປຸຣິສິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ປຸຣິສິນຊີໃນພູມໃດບໍ່ແມ່ນຈັກເກີດ ອຸເປກຂິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ໃນພູມນັ້ນປຸຣິສິນຊີບໍ່ແມ່ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກບໍ່ເກີດ ໃນອະສັນຍະສັດຕະພູມ ໃນພູມນັ້ນປຸຣິສິນຊີບໍ່ແມ່ນຈັກເກີດ ແລະອຸເປກຂິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ອຸເປກຂິນຊີໃນພູມໃດບໍ່ແມ່ນຈັກເກີດ ປຸຣິສິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດ ແມ່ນບໍ?

ວິ. ແມ່ນ

ອະນຸ. ປຸຣິສິນຊີໃນພູມໃດບໍ່ແມ່ນຈັກເກີດ ສັດທິນຊີ ຯລຯ ປັນຍິນຊີ ຯລຯ ມະນິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ໃນພູມນັ້ນປຸຣິສິນຊີບໍ່ແມ່ນຈັກເກີດ ແຕ່ມະນິນຊີບໍ່ແມ່ນຈັກບໍ່ເກີດ ໃນອະສັນຍະສັດຕະພູມ ໃນພູມນັ້ນປຸຣິສິນຊີບໍ່ແມ່ນຈັກເກີດແລະ ມະນິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ມະນິນຊີໃນພູມໃດບໍ່ແມ່ນຈັກເກີດ ປຸຣິສິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ປຸຣິສິນທະຣິຍະມູລະກະໄນ ຈົບ**

## ຊີວິຕິນທະຣິຍະມູລະກະໄນ

[໓໔໑] ອະນຸ. ຊີວິຕິນຊີໃນພູມໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດມີບໍ?

ວິ. ບໍ່ມີ

ປະຕິ. ໂສມະນັດສິນຊີໃນພູມໃດບໍ່ແມ່ນຈັກເກີດ ຊີວິຕິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດ ແມ່ນບໍ?

ວິ. ຈັກເກີດ

ອະນຸ. ຊີວິຕິນຊີໃນພູມໃດບໍ່ແມ່ນຈັກເກີດ ອຸເປກຂິນຊີ ຯລຯ ສັດທິນຊີ ຯລຯ ປັນຍິນຊີ ຯລຯ ມະນິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດມີບໍ?

ວິ. ບໍ່ມີ

ປະຕິ. ມະນິນຊີໃນພູມໃດບໍ່ແມ່ນຈັກເກີດ ຊີວິຕິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ຈັກເກີດ

**ຊີວິຕິນທະຣິຍະມູລະກະໄນ ຈົບ**

## ໂສມະນັດສິນທະຣິຍະມູລະກະໄນ

[໑໒໔] ອະນຸ. ໂສມະນັດສິນຊີໃນພູມໃດບໍ່ແມ່ນຈັກເກີດ ອຸເປກຂິນຊີ ฯລฯ ສັດທິນຊີ ฯລฯ ປັນຍິນຊີ ฯລฯ ມະນິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນິນຊີໃນພູມໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

### ໂສມະນັດສິນທະຣິຍະມູລະກະໄນ ຈົບ

## ອຸເປກຂິນທະຣິຍະມູລະກະໄນ

[໑໒໕] ອະນຸ. ອຸເປກຂິນຊີໃນພູມໃດບໍ່ແມ່ນຈັກເກີດ ສັດທິນຊີ ฯລฯ ປັນຍິນຊີ ฯລฯ ມະນິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນິນຊີໃນພູມໃດບໍ່ແມ່ນຈັກເກີດ ອຸເປກຂິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

### ອຸເປກຂິນທະຣິຍະມູລະໄນ ຈົບ

## ສັດທິນທະຣິຍະມູລະກະໄນ

[໑໒໖] ອະນຸ. ສັດທິນຊີໃນພູມໃດບໍ່ແມ່ນຈັກເກີດປັນຍິນຊີ ฯລฯ ມະນິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນິນຊີໃນພູມໃດບໍ່ແມ່ນຈັກເກີດ ສັດທິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

### ສັດທິນທະຣິຍະມູລະກະໄນ ຈົບ

## ປັນຍິນທະຣິຍະມູລະກະໄນ

[໑໒໗] ອະນຸ. ປັນຍິນຊີໃນພູມໃດບໍ່ແມ່ນຈັກເກີດ ມະນິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ມະນິນຊີໃນພູມໃດບໍ່ແມ່ນຈັກເກີດ ປັນຍິນຊີໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ປັນຍິນທະຣິຍະມູລະກະໄນ ຈົບ**

## ປັດຈະນິກະປຸກຄະໂລກາສະ

## ຈັກຂຸນທະຣິຍະມູລະກະໄນ

[៣៨៣] ອະນຸ. ຈັກຂຸນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ໂສຕິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສຕິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂຸນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຄານິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ຄານິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມ ຄານິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂຸນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ອະຣູບປະພູມ ຄານິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະຈັກຂຸນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂຸນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ອິດຖິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ອິດຖິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຮູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນ

ບໍ່ແມ່ນຈັກເກີດ ແຕ່ຈັກຂຸນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ອະຣູບປະພູມ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະຈັກຂຸນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂຸນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ປຸຣິສິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂຸນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນປັນຈະໂວກາຣະພູມ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຣູບປະພູມ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະຈັກຂຸນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂຸນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມແລະອະຣູບປະພູມ ຈັກຂຸນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຊີວິຕິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ຈັກຂຸນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະຊີວິຕິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ຊີວິຕິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຈັກຂຸນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ໂສມະນັດສິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີຈັກຂຸເກີດໄດ້ແລະມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂຸນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ອະ

ຮູບປະພູມ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະຈັກຂຸນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂຸນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ອຸເປກຂິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະຮູບປະພູມ ຈັກຂຸນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈັກຂຸນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະອຸເປກຂິນຊີ ກໍບໍ່ແມ່ນຈັກເກີດ

ປະຕິ. ອຸເປກຂິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີຈັກຂຸເກີດໄດ້ ແລະມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຈັກຂຸນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະຈັກຂຸນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຈັກຂຸນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ສັດທິນຊີ ຯລຯ ປັນຍິນຊີ ຯລຯ ມະນິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນອະຮູບປະພູມ ຈັກຂຸນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ມະນິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຈັກຂຸນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະມະນິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ມະນິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຈັກຂຸນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ຈັກຂຸນທະຣິຍະມູລະກະໄນ ຈົບ**

## ຄານິນທະຣິຍະມູລະກະໄນ

[໓໔໗] ອະນຸ. ຄານິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ອິດຖິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ອິດຖິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຄານິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ອິດຖິນຊິຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຄານິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນການາວະຈອນພູມ ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະອິດຖິນຊິຈອນພູມ ອິດຖິນຊິຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະຄານິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຄານິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ປະຕິ. ປຸຣິສິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຄານິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຄານິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນການາວະຈອນພູມ ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະຄານິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຄານິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ຄານິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຊີວິຕິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ຄານິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະຊີວິຕິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ຊີວິຕິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຄານິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ຄານິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ຄານິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ໂສມະນັດສິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ອະຣູບປະພູມ ຄານິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະໂສມະນັດສິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ໂສມະນັດສິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຄານິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີຄານະເກີດໄດ້ ແລະມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຄານິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນປັນຈະໂວກາຣະພູມ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ອະຣູບປະພູມ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະຄານິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຄານິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ອຸເປກຂິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ຄານິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຄານິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະອຸເປກຂິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ອຸເປກຂິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຄານິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີຄານະເກີດໄດ້ແລະມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຄານິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະຄານິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ຄານິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ສັດທິນຊີ ໗ລ໗ ປັນຍິນຊີ ໗ລ໗ ມະນິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ຄານິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ມະນິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ຄານິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະມະນິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ມະນິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຄານິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ຄານິນທະຣິຍະມູລະກະໄນ ຈົບ**

# ອິດຖີນທະຣິຍະມູລະກະໄນ

[໓໔໗] ອະນຸ. ອິດຖິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ປຸຣິສິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນກາມາວະຈອນພູມ ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະປຸຣິສິນຊີ ກໍບໍ່ແມ່ນຈັກເກີດ

ປະຕິ. ປຸຣິສິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ອິດຖິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ອິດຖິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນກາມາວະຈອນພູມ ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມແລະອະຣູບປາວະຈອນພູມ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະອິດຖິນຊີ ກໍບໍ່ແມ່ນຈັກເກີດ

ອະນຸ. ອິດຖິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ອະຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຊີວິຕິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະຊີວິຕິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ຊີວິຕິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ອິດຖິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ອິດຖິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິ ໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອິດຖິນຊີ

ຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ໂສມະນັດສິນຊີບໍ່ແມ່ນຈັກບໍ່ເກີດ ປັດສົມພະວິກະບຸກຄົນໃນປັນຈະໂວກາຣະພູມ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ອະຣູບປະພູມ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະໂສມະນັດສິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ໂສມະນັດສິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ອິດຖິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ອິດຖິນຊີບໍ່ແມ່ນຈັກບໍ່ເກີດ ປັດສົມພະວິກະບຸກຄົນໃນປັນຈະໂວກາຣະພູມແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ອະຣູບປະພູມ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ໂສມະນັດສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະອິດຖິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ອິດຖິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ອຸເປກຂິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ອະຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ອຸເປກຂິນຊີບໍ່ແມ່ນຈັກບໍ່ເກີດ ປັດສົມພະວິກະບຸກຄົນ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະອຸເປກຂິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ອຸເປກຂິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ອິດຖິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ອິດຖິນຊີບໍ່ແມ່ນຈັກບໍ່ເກີດ ປັດສົມພະວິກະບຸກຄົນ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອຸເປກຂິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະອິດຖິນຊີກໍບໍ່ແມ່ນຈັກເກີດ

ອະນຸ. ອິດຖິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ສັດທິນຊີ ໗ລ໗ ປັນຍິນຊີ ໗ລ໗ ມະນິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ອະຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ມະນິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນແລະບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ອິດຖິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະມະນິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ມະນິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ອິດຖິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

**ອິດຖິນທະຣິຍະມູລະກະໄນ ຈົບ**

## ປຸຣິສິນທະຣິຍະມູລະກະໄນ

[๑๘๒] ອະນຸ. ປຸຣິສິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ຊີວິຕິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ອະຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ຊີວິຕິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະຊີວິຕິນຊີກໍບໍ່ແມ່ນຈັກເກີດ

ປະຕິ. ຊີວິຕິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ປຸຣິສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ແມ່ນ

ອະນຸ. ປຸຣິສິນຊີຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ໂສມະນັດສິນຊີຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິ ໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ປຸຣິສິນຊີຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ໂສມະນັດສິນຊີບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນປັນຈະໂວກາຣະພູມ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ອະຣູບປະພູມ ແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກ

ອຸບັດແລ້ວປະຣິນິບພານ ປຸຣິສິນຊິຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະໂສມະນັດສິນຊິກໍບໍ່ແມ່ນຈັກເກີດ

ປະຕິ. ໂສມະນັດສິນຊິຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ປຸຣິສິນຊິຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ໂສມະນັດສິນຊິຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ປຸຣິສິນຊິບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນໃນປັນຈະໂວການະພູມ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ອະຣູບປະພູມ ແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານໂສມະນັດສິນຊິຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະປຸຣິສິນຊິກໍບໍ່ແມ່ນຈັກເກີດ

ອະນຸ. ປຸຣິສິນຊິຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ອຸເປກຂິນຊິຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ອະຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນອຸເປກຂາຈັກອຸບັດແລ້ວປະຣິນິບພານ ປຸຣິສິນຊິຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ອຸເປກຂິນຊິບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ປຸຣິສິນຊິຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແລະອຸເປກຂິນຊິກໍບໍ່ແມ່ນຈັກເກີດ

ປະຕິ. ອຸເປກຂິນຊິຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ປຸຣິສິນຊິຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນເຫຼົ່າໃດມີປຸຣິສະເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອຸເປກຂິນຊິຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດ ແຕ່ປຸຣິສິນຊິບໍ່ແມ່ນຈັກບໍ່ເກີດ ປັດສິມພະວິກະບຸກຄົນ ບຸກຄົນຜູ້ອຸບັດຢູ່ໃນອະສັນຍະສັດຕະພູມ ແລະບຸກຄົນເຫຼົ່າໃດມີອິດຖີເກີດໄດ້ຖືປະຕິສົນທິໃນບາງພົບໂດຍພາວະນັ້ນ ໆ ມີຈິດເປັນໂສມະນັດຈັກອຸບັດແລ້ວປະຣິນິບພານ ອຸເປກຂິນຊິຂອງບຸກຄົນເຫຼົ່ານັ້ນໃນພູມນັ້ນບໍ່ແມ່ນຈັກເກີດແລະປຸຣິສິນຊິກໍບໍ່ແມ່ນຈັກເກີດ

ອະນຸ. ປຸຣິສິນຊິຂອງບຸກຄົນໃດໃນພູມໃດບໍ່ແມ່ນຈັກເກີດ ສັດທິນຊິ ຯລຯ ປັນຍິນຊິ ຯລຯ ມະນິນຊິຂອງບຸກຄົນນັ້ນໃນພູມນັ້ນກໍບໍ່ແມ່ນຈັກເກີດແມ່ນບໍ?

ວິ. ບຸກຄົນຜູ້ອຸບັດຢູ່ໃນຣູບປາວະຈອນພູມ ອະຣູບປາວະຈອນພູມ ແລະບຸກຄົນເຫຼົ່າໃດມີ

